“

ມີຄວາມຮູ້ ແຕ່ຖ້າຂາດ

ຈິນຕະນາການ ກໍໄຮ້ຄຸນຄ່າ...

”

ສະບາຍດີທ່ານຜູ້ອ່ານ,

ເມື່ອບໍ່ນານມານີ້, ຂ້າພະເຈົ້າໄດ້ທຳການລິເລີ່ມນຳເອົາເພງລາວເກົ່າ ມາກ່າຍຂຽນ ເປັນໂນຕສາກົນແລະເສບເປັນແບບດົນຕຣີບັນເລງ (ບໍ່ມີສຽງຂັບຮ້ອງນຳ), ຈຸດປະສົງ ແມ່ນບໍ່ໄດ້ຫວັງໃຫ້ບັນລຸຄວາມສົມບູນແບບ ໃນການຜະສົມປະສານສຽງ ຫຼືແນໃສ່ເອົາຄຸນນະພາບຂອງການບັນທຶກສຽງ ຫຼືວິດີໂອການເສບບັນເລງ ທາງດ້ານເຄື່ອງດົນຕຣີແຕ່ຢ່າງໃດ. ເພາະວ່າເປົ້າໝາຍ ບໍ່ແມ່ນເພື່ອສຳລັບການອອກເປັນ CD ຫຼື DVD. ແຕ່ວ່າ ມັນແມ່ນຄວາມປະສົງຢາກແລກປ່ຽນແລະແບ່ງປັນຄວາມຮູ້ຄວາມສາມາດສ່ວນຕົວຂອງຂ້າພະເຈົ້າກັບຄົນອື່ນ (ຜູ້ທີ່ສົນໃຈ), ໂດຍສະເພາະ ແມ່ນອີງໃສ່ຂໍ້ມູນຕົ້ນສະບັບຂອງຜູ້ປະພັນເພງຕົ້ນຕໍເທົ່າທີ່ຄົ້ນຄວ້າແລະຊອກຫາມາໄດ້.

ແນ່ນອນວ່າ ມັນຍັງຈະບໍ່ສົມບູນແລະຍັງມີຂໍ້ຂາດຕົກບົກພ່ອງຢູ່ ແຕ່ຈະພະຍາຍາມດັດແປງແລະແກ້ໄຂຕາມເວລາອຳນວຍ.

ທັງນີ້ ແມ່ນເພື່ອໃຫ້ຄົນຮຸ່ນໃໝ່ແລະຮຸ່ນເກົ່າ ຫຼືຄົນຊາດອື່ນເຖິງວ່າຈະບໍ່ແມ່ນຄົນລາວ (ຖ້າຫາກວ່າພວກເຂົາເຈົ້າຫາກມີຄວາມສົນໃຈໃນສຽງເພງແລະດົນຕຣີລາວ ໂດຍສະເພາະແມ່ນຜູ້ທີ່ມີຄວາມສາມາດອ່ານແລະເຂົ້າໃຈໂນຕດົນຕຣີເປັນຫຼືບໍ່ເປັນກໍຕາມແຕ່) ໄດ້ມີບ່ອນອີງເປັນຂໍ້ມູນໃນການສຶກສາແລະຄົ້ນຄວ້າ. ຈຸດປະສົງກ່ອນອື່ນ ແມ່ນຫຼີກລ່ຽງການບິດເບືອນຕົ້ນສະບັບອັນດັ້ງເດີມ ກ່ຽວກັບ ຊື່ເພງ ຊື່ຜູ້ແຕ່ງ ນັກຮ້ອງຕົ້ນສະບັບ ເນື້ອເພງ ຣະດັບສຽງ ແລະ ຈັງຫວະຕົ້ນຕໍ.

ເນື່ອງຈາກວ່າໃນເວລາຫຼາຍປີທີ່ຜ່ານມາ, ຂ້າພະເຈົ້າໄດ້ຕິດຕາມແລະສັງເກດເຫັນວ່າ ໃນບັນດາການນຳເອົາເພງລາວເກົ່າມາບັນເລງແລະຂັບຮ້ອງໃໝ່ຈຳນວນໜຶ່ງ, ມີຂໍ້ຂາດຕົກບົກພ່ອງທາງດ້ານຊື່ເພງ ຊື່ຜູ້ແຕ່ງ ເນື້ອຮ້ອງທຳນອງແລະຈັງຫວະ. ມັນໄດ້ສ້າງຄວາມສັບສົນແລະຄວາມເຂົ້າໃຈຜິດ ມີການຂັດແຍ່ງຖົກຖຽງກັນໃນໝູ່ຜູ້ຟັງ ຫຼືນັກດົນຕຣີທີ່ພະຍາຍາມຈະເສບແລະບັນເລງໂດຍສະເພາະ.

ສາເຫດຄືງແມ່ນຍ້ອນຂາດຂໍ້ມູນ ຂໍ້ບັນທຶກຂີດຂຽນອັນຖືກຕ້ອງ ມີແຕ່ອາສັຍຄວາມຈື່ຈຳ ອັນມີຂອບເຂດຈຳກັດເປັນທີ່ເພິ່ງ ແລະບາງຈຳນວນກໍມີການເດົາເອົາກໍມີ ເພາະຂາດຄວາມແນ່ນອນໃຈ.

ຂ້າພະເຈົ້າເປັນຜູ້ໜຶ່ງ ທີ່ມີຄວາມມັກຮັກໃນສຽງເພງແລະດົນຕຣີລາວມາແຕ່ນ້ອຍ ບໍ່ເຄີຍໄດ້ເຂົ້າໂຮງຮຽນດົນຕຣີແຫ່ງໃດມາກ່ອນ ອາສັຍແຕ່ການສຶກສາ ແລະຄົ້ນຄວ້າດ້ວຍຕົນເອງຕລອດມາ ດ້ວຍຄວາມມັກຮັກແຕ່ຢ່າງດຽວ ເພາະເປັນຄົນມັກອ່ານແລະມີຈິດໃຈກະຕືລືລົ້ນຊອກຫາເຫດຜົນ.

ຂ້າພະເຈົ້າຄິດແລະເຂົ້າໃຈວ່າ ໂນຕດົນຕຣີສາກົນ (solfège)
ແມ່ນວິຊາສາດແລະທິດສະດີແບບໜຶ່ງ ຊຶ່ງເປັນພື້ນຖານຂອງດົນຕຣີແລະສຽງເພງ,
ເນື່ອງຈາກວ່າມັນແມ່ນລາຍລັກອັກສອນຂອງສຽງ ເຊັ່ນດຽວກັນກັບ
ການຂີດຂຽນຂອງພາສາປາກເວົ້າ. ມັນມີຣະບຽບແລະກົດເກນຂໍ້ບັງຄັບຂອງມັນເອງ
ເພື່ອບົ່ງບອກບົດເພງຈົນໄປຮອດການເສບບັນເລງດ້ວຍເຄື່ອງດົນຕຣີຕ່າງໆຢ່າງຄົບຖ້ວນ.
ຖ້າບໍ່ມີໂນຕແລະກົດເກນດັ່ງກ່າວ, ມັນກໍເປັນການຍາກແລະລຳບາກ
ໃນການຕິດຕໍ່ແລະສື່ສານກັບຄົນອື່ນ ແມ່ນແຕ່ການສົນທະນາລະຫວ່າງ
ນັກດົນຕຣີແລະນັກສິລະປິນດ້ວຍກັນ.
ເພາະທີ່ຜ່ານມາ ແມ່ນອາສັຍພຽງແຕ່ຄວາມຈື່ຈຳແລະຮັບຟັງດ້ວຍຫູ ແບບຖ່ອງຂຶ້ນໃຈ
ສ່ວນການບັນທຶກຂີດຂຽນແມ່ນບໍ່ມີຫຼັກການພຽງພໍແລະບໍ່ຄົບຖ້ວນສົມບູນຕາມແບບສາກົນ.

ຂ້າພະເຈົ້າບໍ່ຫານຍົກເອົາຄວາມຮູ້ທາງດ້ານໂນຕດົນຕຣີທີ່ໄດ້ຮ່ຳຮຽນດ້ວຍຕົນເອງ
ມາເປັນຫຼັກອ້າງອີງເພື່ອສັ່ງສອນຫຼືຕັດສິນຕຳນິຕິຕຽນນັກສິລປິນ ຜູ້ທີ່ບໍ່ມີໂອກາດ
ຫຼືເວລາໃນການຮຽນຮູ້ທິດສະດີດົນຕຣີ ເພາະບາງທີຍ້ອນເຫດຜົນສ່ວນຕົວຫຼືອື່ນໆ,
ເພາະສັງເກດເຫັນວ່າ ຜ່ານມາພວກເຂົາເຈົ້າກໍສາມາດເຮັດປຣະດິດຄິດສ້າງບົດເພງຂຶ້ນມາໄດ້
ຈົນສຳເຣັດເປັນຜົນງານ ແລະກາຍເປັນມໍລະດົກອະມະຕະ
ໃຫ້ພວກເຮົາໄດ້ເຫັນແລະໄດ້ຟັງຈົນເທົ່າສູ່ມື້ນີ້...

ທັງຫມົດນີ້ ພາໃຫ້ຂ້າພະເຈົ້າຕັດສິນໃຈ ລົງມືທຳການຮິບໂຮມ
ແລະແບ່ງປັນເພງລາວອະມະຕະຈຳນວນນຶ່ງ ເປັນໂນຕສາກົນ ພ້ອມດ້ວຍເນື້ອຮ້ອງ ແລະ
ທຳນອງຈັງຫວະ ໂດຍບໍ່ຍົກເວັ້ນການລະບຸຊື່ຂອງຜູ່ປຣະພັນແລະຜູ່ຂັບຮ້ອງຕົ້ນສະບັບ
ດ້ວຍຄວາມເຄົາຣົບແລະນັບຖື ບັນດານັກປຣະພັນເພງຜູ້ອາວຸໂສ ຊຶ່ງມີຈຳນວນນຶ່ງ
ຍັງມີຊີວິດຢູ່ແລະບາງທ່ານກໍດຳລົງຊີວິດກະແຈກກະຈາຍຢູ່ທົ່ວທະວີບ.

ອີກປຣະການນຶ່ງ ວິດີໂອທີ່ຂ້າພະເຈົ້າປຣະດິດຂຶ້ນເພື່ອປຣະກອບບົດເພງທັງໝົດ
ໂດຍອາສັຍເຄື່ອງດົນຕຣີສາກົນຕົ້ນຕໍຊຶ່ງຮຽກວ່າ "ອໍແກນອັຕໂນມັດ" (Arranger
Keyboard / Clavier Arrangeur) ເສບບັນເລງ ແມ່ນເປັນພຽງແບບຢ່າງ
ໃຫ້ສຶກສາຄົ້ນຄວ້າຕໍ່ໄປ ບໍ່ໃຫ້ຖືເອົາເປັນຫຼັກຕາຍຕົວໃນການຢັ້ງຢືນຂອງບົດເພງ.

ສຸດທ້າຍ ຂໍຂອບໃຈແລະຂໍສະແດງຄວາມຮູ້ບຸນຄຸນບັນດາຄູບາອາຈານ ນັກປຣະພັນ
ແລະນັກສິລປິນລາວຮຸ່ນອາວຸໂສທຸກໆທ່ານ ທີ່ໄດ້ສ້າງຜົນງານ ບົດເພງຕ່າງໆ
ໄວ້ໃຫ້ປວງຊົນໄດ້ຊື່ນຊົມແລະຄົ້ນຄວ້າສຶກສາຮ່ຳຮຽນສືບຕໍ່ໃຫ້ຍືນຍາວຕລອດການນານ.

ດ້ວຍຄວາມຮັກແພງ
ພົງສມອນ ດາວົງສ໌
Paris, ວັນທີ່ 24/06/2016



ສາລະບານ ດົນຕຣີບັນເລງເພງລາວອະມະຕະ
ພ້ອມໂນຕສາກົນ ແລະເນື້ອຮ້ອງ
ເລີ່ມຕົ້ນຮິບໂຮມແລະເຜີຍແຜ່ : ວັນທີ່ 24/06/2016

# ດວງໃຈນ້ອງຢູ່ໃສ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1965






























# ດວງໃຈນ້ອງຢູ່ໃສ

Key : Am
Slow Rock

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1965

| | | | |
|---|---|---|---|
| 1) | ດວງໃຈ | ນ້ອງຢູ່ໃສ | ອ້າຍຄິດເຖິງນ້ອງ |
| | ດວງໃຈ | ອ້າຍໝິ່ນໝອງ | ບໍ່ເຫັນໜ້າ |
| | ດວງໃຈ | ນັບຈາກກັນ | ວັນນັ້ນມາ |
| | ຢູ່ຢ່າງໃດໜາ | ທີ່ຮັກ | ອ້າຍເປັນຫ່ວງໃຍ |
| 2) | ດວງໃຈ | ນ້ອງຢູ່ໃສ | ອ້າຍເປັນທຸກໜັກ |
| | ດວງໃຈ | ເຈົ້າແຫ່ງຮັກ | ຮູ້ບໍ່ແກ້ວໃຈ |
| | ດວງໃຈ | ພຽງຂາດນາງ | ມາຊິດໃກ້ |
| | ເປົ່າປ່ຽວດຽວດາຍ | ເຫວອ້າ | ທຸກຣາຕຣິການ |
| • | ສຸດທີ່ຮັກ | ສຸດທີ່ຮັກ | ເຈົ້າຢູ່ໃສ |
| | ສຸດຫົວໃຈ | ສຸດຫົວໃຈ | ຄູ່ເຄີຍຮັກໝັ້ນ |
| | ສຸດຄິດເຖິງ | ເຈົ້າເຫຼືອໃຈ | ຈະຂາດສະບັ້ນ |
| | ສິ້ນສິງສານ | ອ້າຍແລ້ວ | ຫຼືດວງແກ້ວຕາ |
| 3) | ດວງໃຈ | ນ້ອງຢູ່ໃສ | ອ້າຍຄັ່ງອ້າຍປ່ວງ |
| | ດວງໃຈ | ອ້າຍຫ່ວງຫວງ | ນ້ອງຈຽນບ້າ |
| | ດວງໃຈ | ຢູ່ແຫ່ງໃດ | ຈິ່ງຈຳໄວ້ອ່າ |
| | ເທົ່າສິ້ນດິນຟ້າ | ທີ່ຮັກ | ອ້າຍຍັງຮັກນາງ... |

# ຫາກຄົນອື່ນດີກວ່າ

ເນື້ອຮ້ອງ & ທຳນອງ : ..?..

ນັກຮ້ອງຕົ້ນສະບັບ : ແສງອາຣຸນ ສິດທິພັນ

~1970




(Intro) ______ ຖ້າ ຫາກ ນ້ອງ




ມີ ຊາຍ ອື່ນ ທີ່ ດີ ກວ່າ ອ້າຍ - ຄວາມຫວັງ ໃດ ໆ ທີ່ ອ້າຍ ໃຫ້ ຄື ນ້ອງ ມາ ບອກຄວາມຮັກ




ແທ້ ທີ່ ອ້າຍມອບໃຫ້ ແກ້ວ ຕາ ເທີດທູນເໜືອດວງ ຊີ ວາ ບໍ່ ເຄີຍ ຄິດ ຈະທຳ ລາຍ... ຖ້າ ຫາກ ນ້ອງ




ມີ ຊາຍ ອື່ນ ທີ່ ດີ ກວ່າ ນີ້ - ອ້າຍ ຂໍ ຍອມ ພລີ ພາກ ໜີ ໃຫ້ ນ້ອງ ເດີນ ໄປ ບໍ່ ຂໍ ອ້ອນ




ວອນ ໃຫ້ ນ້ອງ ເມດ ຕາ ເຫັນ ໃຈ ພ້ອມ ທັງ ຄວາມຫວັງ ໃດ ໆ ຍິນ ດີ ໃຫ້ ນ້ອງ ປະ ຫານ... ເພາະ ສອງ -




ເຮົາ ຕ່າງ ເຝົ້າ ແຕ່ ເຂົ້າ ໃຈ ຜິດ - ເຝົ້າ ແຕ່ ຈະ ຄິດ ຖື ຜິດ ຢູ່ ທຸກ ຄືນ ວັນ ຄວາມ ສຸກ ຄວາມ




ຊື່ນ ກັບ ເປັນ ຂົມ ຂື່ນ ດວງ ນານ ເມື່ອ ບໍ່ ຮັກ ຈຶ່ງ ປະ ຫານ ອ້າຍ ນັ້ນ ຍອມເສັຽ ນ້ຳ ຕາ... ຖ້າ ຫາກ ນ້ອງ




ມີ ຊາຍ ອື່ນ ທີ່ ດີ ກວ່າ ອ້າຍ - ມີ ທັງ ນ້ຳ ໃຈ ຍຶດ ສັກ ມີ ຮັກ ບູ ຊາ ຂໍ ນ້ອງ ຈົ່ງ




ຮັກ ໃຫ້ ສົມ ດັ່ງ ປຣາ ຖ ນາ ອ້າຍ ຈີນ ຂໍ ທົນ ໜີ ໜ້ຳ ຕາມ ທາງ ຂອງ ຜູ່ ມີ ກັມ... (Solo verse B)




ກັມ... (Coda) ______

# ຫາກຄົນອື່ນດີກວ່າ

Key : F
Slow

ເນື້ອຮ້ອງ & ທຳນອງ : ..?..
ນັກຮ້ອງຕົ້ນສະບັບ : ແສງອາຣຸນ ສິດທິພັນ

~1970

1) ຖ້າຫາກນ້ອງມີ ຊາຍອື່ນທີ່ດີກວ່າອ້າຍ
ຄວາມຫວັງໃດໆ ທີ່ອ້າຍໃຫ້ຕົວນ້ອງມາ
ບອກຄວາມຮັກແທ້ ທີ່ອ້າຍມອບໃຫ້ແກ້ວຕາ
ເທີດທູນເໜືອດວງຊີວາ ບໍ່ເຄີຍຄິດຈະທຳລາຍ

2) ຖ້າຫາກນ້ອງມີ ຊາຍອື່ນທີ່ດີກວ່ານີ້
ອ້າຍຂໍຍອມພລີ ພາກໜີໃຫ້ນ້ອງເດີນໄປ
ບໍ່ຂໍອ້ອນວອນ ໃຫ້ນ້ອງເມດຕາເຫັນໃຈ
ພ້ອມທັງຄວາມຫວັງໃດໆ ຍິນດີໃຫ້ນ້ອງປະຫານ

• | ເພາະສອງເຮົາ ຕ່າງເຝົ້າແຕ່ເຂົ້າໃຈຜິດ
| ເຝົ້າແຕ່ຈະຄິດ ຖືຜິດຢູ່ທຸກຄືນວັນ
| ຄວາມສຸກຄວາມຊື່ນ ກັບເປັນຂົມຂື່ນດວງມານ
| ເມື່ອບໍ່ຮັກຈົ່ງປະຫານ ອ້າຍນັ້ນຍອມເສັຽນ້ຳຕາ

3) ຖ້າຫາກນ້ອງມີ ຊາຍອື່ນທີ່ດີກວ່າອ້າຍ
ມີທັງນ້ຳໃຈ ຍົດສັກມີຮັກບູຊາ
ຂໍນ້ອງຈົ່ງຮັກ ໃຫ້ສົມດັ່ງປຣາຖນາ
ອ້າຍຈົນຂໍຫົນໜີໜ້າ ຕາມທາງຂອງຜູ່ມີກັມ...

# ຄິດດູເສັຽກ່ອນ

ເນື້ອຮ້ອງ & ທຳນອງ : ..?..

ນັກຮ້ອງຕົ້ນສະບັບ : ນະຣຽມ

~1970






























# ຄິດດູເສັຽກ່ອນ

Key : Gm
Slow Waltz

ເນື້ອຮ້ອງ & ທຳນອງ : ..?..
ນັກຮ້ອງຕົ້ນສະບັບ : ນະທຣຽມ

~1970

1) ຄິດດູ ເສັຽກ່ອນຄວາມຮັກ
ຕົກຕອງໃຫ້ໜັກ ຄ່ອຍລົງມືປັກໝາຍ
ອູບອາມ ຕັດສິນງ່າຍໄປ
ຈະປອດດວງໃຈ ເມື່ອຄວາມຮັກສັ້ນ

2) ທະເລ ເຂົາວ່າເລິກລົ້ນ
ແຕ່ໃຈຂອງຄົນ ນັ້ນເລິກເກີນອະນັນ
ເບິ່ງໄປ ໃຫ້ຊຶ້ງນານວັນ
ເທບເທິງສວັນ ຈະທານຮັກຈິງ

• ຂໍ ຄິດດູເສັຽກ່ອນ
ແນ່ນອນ ນ້ອງບໍ່ປະວິງ
ຫາກເກີດ ຈາກໃຈແທ້ຈິງ
ທຸກສິ່ງມອບໃຫ້ ດັ່ງໝາຍ

3) ຄິດດູ ເສັຽກ່ອນທີ່ຮັກ
ນ້ອງປຽບເໝືອນຜັກ ທີ່ຊີງຄວາມອ່ອນໄຫວ
ຖືກລົມ ຈະຊ້ຳງ່າຍດາຍ
ໂປຣດຢ່າທຳລາຍ ຜູ້ຍິງໃຫ້ຕຣົມ...

# ຮັກນິກັນ

ເນື້ອຮ້ອງ & ທຳນອງ : ວິລລ້ຽມ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ວິລລ້ຽມ ດິດທະວົງສ໌

1972

Slow (♩ = 58)

G A D B7 Em A Bm F♯

(Intro) ______ ອັນ ຄວາມຮັກ

**A**

G A D B7 Em A F♯ Bm

ເຮົາ ນັ້ນ ຄືງ ນິ ເວນ ຫຼື ກັນ ຜູ້ ໃຫຍ່ ກັບ ນາ ທຳ ໃຫ້ ສອງ ເຮົາ ພາກ ຈາກ ກັນ ສອງ ເຮົາ ຕ່າງ

A Bm D Em A F♯ Bm

ຮັກ ເທີດ ຮັກ ດ້ອຍຄວາມ ຍຶດ ໝັ້ນ ຕ່າງໆ ກໍ ສາ ບານ ກັນ ຈະ ຮັກ ຊື່ ຟ້າ ນິ ອັນ... ແຕ່ ແລ້ວ ຮັກ

**B**

G A D B7 Em A F♯ Bm

ເຮົາ ນັ້ນ ມາ ບໍ່ ສົມ ດັ່ງ ໝາຍ ຄວາມຮັກ ຖືກ ທຳ ລາຍ ພາກ ເຮົາ ໃຫ້ ຫ່າງ ໄກ ກັນ ນ້ອງ ຖືກ ບັງ

A D B7 Em A G D Bm

ຄັບ ຕັດ ຮັກ ເຮົາ ໃຫ້ ຂາດ ກັນ ນັບ ຕັ້ງ ແຕ່ ວັນ ນັ້ນ ສ ອັນ ກາຍ ເປັນ ນ້ຳ ຕາ... ໂອ້...ເນັຽ

**C**

A F♯m Bm D G Em A

ເອີຍ ຄືງ ເປັນ ເວນ ກັນ ຂອງ ເຮົາ ອ້າຍ ເອງ ກໍ ແສນ ຈະ ເສົ້າ ເຝົ້າ ແຕ່ ຄິດ ເຖິງ ແກ້ວ ຕາ ຄິດ ເປັນ

D B7 Em F♯m G A D F♯

ຫ່ວງ ລູກ ນ້ອຍ ກໍ ສຸດ ຄະ ນາ ຕັ້ງ ແຕ່ ລູກ ເກີດ ມາ ໜ້າ ຕາ ອ້າຍ ຍັງ ບໍ່ ເຫັນ... ເຂົາ ຕັດ ຮັກ

**D**

G A D B7 Em A F♯ Bm

ເຮົາ ເຂົາ ເຜົາ ບໍ່ ເຫຼືອ ຫຍັງ ເລີຍ ນ້ອງເອງ ກັບ ທຳ ເສີຍ ໂຫ້ ເອີຍ ໂອ້ ເວນ ໜໍ ເວນ ອ້າຍ ຈະ ທົນ

A D Bm Em A G To Coda 1. D A7

ຮັກ ທົນ ຄອຍ ດ້ອຍຄວາມ ຈຳ ເປັນ ຊີ ວິດ ຄືງ ບໍ່ ເອັ້ນ ຊ້ຳ ໃຈ ຕາຍ - ແຫ້ ເອີຍ... (Solo verse B)

**E**

Coda 2. D Bm G A D B7 Em A Bm F♯ Bm Bm9

ເອີຍ... (Coda) ______ Fine

# ຮັກນິກັນ

Key : D
Slow

ເນື້ອຮ້ອງ & ທຳນອງ : ວິລລ້ຽມ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ວິລລ້ຽມ ດິດທະວົງສ໌

1972

1) ອັນຄວາມຮັກເຮົາ ນັ້ນຄືງນິເວນຫຼືກັນ
ຜູ່ໃຫຍ່ກັບມາທຳ ໃຫ້ສອງເຮົາພາກຈາກກັນ
ສອງເຮົາຕ່າງຮັກ ເຫັດຮັກດ້ວຍຄວາມຍຶດໝັ້ນ
ຕ່າງກໍສາບານກັນ ຈະຮັກຊື່ອຟ້ານິຣັນ

2) ແຕ່ແລ້ວຮັກເຮົາ ນັ້ນມາບໍ່ສົມດັ່ງໝາຍ
ຄວາມຮັກຖືກທຳລາຍ ພາກເຮົາໃຫ້ຫ່າງໄກກັນ
ນ້ອງຖືກບັງຄັບ ຕັດຮັກເຮົາໃຫ້ຂາດກັນ
ນັບຕັ້ງແຕ່ວັນນັ້ນ ສວັນກາຍເປັນນ້ຳຕາ

• | ໂອ້... ເມັຽເອີຍ ຄືງເປັນເວນກັມຂອງເຮົາ
ອ້າຍເອງກໍແສນຈະເສົ້າ ເຝົ້າແຕ່ຄິດເຖິງແກ້ວຕາ
ຄິດເປັນຫ່ວງ ລູກນ້ອຍກໍສຸດຄະນາ
ຕັ້ງແຕ່ລູກເກີດມາ ໜ້າຕາອ້າຍຍັງບໍ່ເຫັນ

3) ເຂົາຕັດຮັກເຮົາ ເຂົາເຜົາບໍ່ເຫຼືອຫຍັງເລີຍ
ນ້ອງເອງກັບທຳເສີຍ ໂທ້ເອີຍ ໂອ້ ເວນໜໍເວນ
ອ້າຍຈະທີນຮັກ ທົນຄອຍດ້ວຍຄວາມຈຳເປັນ
ຊີວິດຄືງບໍ່ເວັ້ນ ຊ້ຳໃຈຕາຍແທ້ເອີຍ...

# ພໍແລ້ວເຈັບແລ້ວສາບແລ້ວ

ເນື້ອຮ້ອງ : ວິລລ້ຽມ ດິດທະວົງສ໌ - ທຳນອງເພງຝຣັ່ງ
ນັກຮ້ອງຕົ້ນສະບັບ : ວິລລ້ຽມ ດິດທະວົງສ໌

1973















# ພໍແລ້ວເຈັບແລ້ວສາບແລ້ວ

Key : C
Slow

ເນື້ອຮ້ອງ : ວິລລ້ຽມ ດິດທະວົງສ໌ - ທຳນອງເພງຝຣັ່ງ : Jacques Revaux
ນັກຮ້ອງຕົ້ນສະບັບ : Michel Sardou

1973

*ພໍແລ້ວ ເຈັບແລ້ວ ສາບແລ້ວ ຄວາມຮັກ...*

1) ຄວາມທຸກຄວາມເສົ້າແຜດເຜົາເມື່ອຮັກສິ້ນຄ່າ
ຄວາມຫຼັງທີ່ມັນຜ່ານມາກໍສູນສິ້ນຄ່າໄປດ້ວຍເຊັ່ນກັນ
ຢ່າຫວັງວ່າເຂົາຈະຄິດເຖິງຄວາມສັມພັນ
ຄວາມຮັກທີ່ເຄີຍສຸກນັ້ນຄົງບໍ່ມີວັນທີ່ຈະກັບມາ...

• ຖິ້ມເອົາໄວ້ພຽງຄວາມເສົ້າເຫຼືອພຽງເງົາທີ່ໂສກາ
ຢູ່ກໍຢູ່ກັບນ້ຳຕາເໝືອນຟ້າຄອຍລິງໂຫດທັນ
ໂອ້ຄວາມຮັກບໍ່ແນ່ນອນຄອຍຫຼອກຫຼອນທຸກຄືນວັນ
ອັນຄວາມເຈັບທີ່ຕົ້ນຕັນຄົງບໍ່ມີວັນຈະຫາຍ...

2) ພໍແລ້ວເຈັບແລ້ວສາບແລ້ວຄວາມຮັກຂໍໜ່າຍ
ຄວາມຮັກທີ່ສິ້ນຄວາມໝາຍຖືກເຂົາທຳລາຍນ້ຳຕານອງໜ້າ
ໂຊກດີເຖີດນ້ອງຢ່າໝອງເໝືອນຮັກຂອງຂ້າ
ມີຮັກແລ້ວຢ່າຈາກລາສິດຊື່ນເຖີດໝານາງຟ້າຂ້າເອີຍ...

ອື່ງ ອື່ງ ອື່ງງ ອື່ງງ ອື່ງ ອື່ງ ອື່ງງ ອື່ງງ…

# ຮັກກັນຊັງກັນ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຕຸ່ນ ວົງສະນິດ

1968

Lamvong Lao (♩ = 90)

Eb Bb Cm Ab Gm Bb7 Eb Bb Cm
(Intro) ______ ຮັກ

**A**

1 Eb Bb Cm Ab Eb Gm
ກັນ ເໝືອນຈະ ກິນ ກິນ ໄດ້ ໄປ ໃສ ມາ ໃສ___ ສຸດ ອາ ລັຍ ແສນ ຫ່ວງ___ ຢ້ານ ແຕ່ ຄົນ

5 Cm C7 Fm Bb Eb Ab Bb Eb Bb7
ຮັກ ຄິດ ຫຼອກ ຄິດ ລວງ ທັງ ຫວງ ທັງ ຫ່ວງ___ ຢ້ານ ເຂົາ ຄອງ ຄົນ ອື່ນ... ຊັງ

**B**

9 Eb Bb Cm Ab Eb Gm
ກັນ ຄິດ ຢາກ ບິນ ໜີ ໄດ້ ຮັກ ຫຼາຍ ຊັງ ຫຼາຍ___ ບໍ່ ເຫັນ ໃຈ ຄາຍ ຊື່ນ___ ຄຳ ໝັ້ນ ສັນ

13 Cm C7 Fm Bb Eb Bb Eb
ຍາ ຫຼີບ ໜ້າ ສິ່ງ ຄືນ ຈາກ ຫວານ ເປັນ ຂື່ນ___ ຄືນ ຄວາມ ຮັກ ຈາກ ຈອນ...___ ຊັງ

**C**

17 Fm Gm Eb Ab Eb Bb Cm
ກັນ ນັ້ນ ມັນ ງ່າຍ ແທ້ ໜໍ___ ມິ ໄດ້ ຄິດ ຕໍ່___ ຂໍ ຄວາມ - ເຫັນ ໃຈ ກ່ອນ___ ຜິດ ໃຈ ໜ້ອຍ

21 Fm Bb Fm Ab Eb C7 Fm Bb7
ດຽວ ບໍ່ ແລ ບໍ່ ຫຼຽວ ບໍ່ ອາ ທອນ___ ຮັກ ກັນ ຕ້ອງ ເຝົ້າ ອາ ວອນ ງໍ້ ງອນ - ຢູ່ ທຸກ ຄືນ ວັນ... ຮັກ

**D**

25 Eb Bb Cm Ab Eb Gm
ກັນ ນອນ ກະ ຝັນ ເຫັນ ໜ້າ ຂ້າມ ຫ້ວຍ ຂ້າມ ຜາ___ ປຣາ ຖ ນາ ຮັກ ນັ້ນ___ ບັດ ຊັງ ຂື້ນ

29 Cm C7 Fm Bb Eb Bb To Coda | 1. Eb Bb7
ມາ ຢາກ ຂ້າ ຢາກ ຟັນ ຢາກ ໜີ ໜ້າ ກັນ___ ບໍ່ ຢາກ ພົບ ພານ ອີກ ເລີຍ... (Solo verse B)

Coda

**E**

33 2. Eb Cm Gm Fm Bb Eb Ab Abm Eb
ເລີຍ... (Coda) ______ (♩ = 78) rall... ______ Fine

# ຮັກກັນຊັງກັນ

Key : Eb
Lamvong

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຕຸ່ນ ວົງສະນິດ

1968

1) ຮັກກັນ    ເໝືອນຈະກືນກິນໄດ້
ໄປໃສມາໃສ    ສຸດອາລັຍແສນຫ່ວງ
ຢ້ານແຕ່ຄົນຮັກ    ຄິດຫຼອກຄິດລວງ
ທັງຫວງທັງຫ່ວງ    ຢ້ານເຂົາຄອງຄົນອື່ນ

2) ຊັງກັນ    ຄິດຢາກບິນໜີໄດ້
ຮັກຫຼາຍຊັງຫຼາຍ    ບໍ່ເຫັນໃຈຄາຍຊື່ນ
ຄຳໝັ້ນສັນຍາ    ຫຼີບໜ້າສິ່ງຄືນ
ຈາກຫວານເປັນຂື່ນ    ຄືນຄວາມຮັກຈາກຈອນ

• ຊັງກັນ    ນັ້ນມັນງ່າຍແທ້ໜໍ
ມິໄດ້ຕິດຕໍ່    ຂໍຄວາມເຫັນໃຈກ່ອນ
ຜິດໃຈໜ້ອຍດຽວ    ບໍ່ແລບໍ່ຫຼຽວບໍ່ອາທອນ
ຮັກກັນຕ້ອງເຝົ້າອາວອນ    ງໍ້ງອນຢູ່ທຸກຄືນວັນ

3) ຮັກກັນ    ນອນກະຝັນເຫັນໜ້າ
ຂ້າມຫ້ວຍຂ້າມຜາ    ປຣາຖນາຮັກນັ້ນ
ບັດຊັງຂຶ້ນມາ    ຢາກຂ້າຢາກຟັນ
ຢາກໜີໜ້າກັນ    ບໍ່ຢາກພົບພານອີກເລີຍ...

# ຊັງອ້າຍເຣື່ອງໃດ

ເນື້ອຮ້ອງ & ທຳນອງ : ສຸວັນ ສຸວັນນະທາຊ

ນັກຮ້ອງຕົ້ນສະບັບ : ຄຳພູດ ເຄນກິດຕິສັກ

1966

Soul (♩= 120)

F Dm F Dm F C7 F C7

(Intro) ລາ ລາ ລ່າ ລ້າ ລາ ລ່າ ລາ ລາ ລ່າ ລ້າ ລາ ລ່າ ລາ ລາ ລ່າ ລາ - ລາ - ລ້າ ລາ ທີ່

A

1 F Am Dm B♭ Gm B♭ C7

ຮັກ ຫັນ - ໜ້າ ມາ ເອົ້າ - ກັນ ກ່ອນ ນ້ອງ ຢ່າ ໄດ້ ຟ້າວ - ຕັດ ຮອນ ຫາ - ແຕ່ ບ່ອນ ແຍກທາງ ໝົ -

7 F Am Dm F C7

ໄປ ນ້ອງ - ຊັງ ອ້າຍ ນີ້ ເຣື່ອງ - ໃດ ເປັນ ຫຍັງ - ບໍ່ ໄຂ - ບອກ ອ້າຍ - ຈັກ ຄຳ... ທີ່

B

12 F Am Dm B♭ Gm B♭ C7

ຮັກ ຫຼື - ນ້ອງ ມີ ຄູ່ - ຄອງ ໃໝ່ ນ້ອງ ຈຶ່ງ ໄດ້ ຕັດ ສິນ - ໃຈ ເຮັດ ໃຫ້ ອ້າຍ ມີ ໃຈ ຂອກ -

18 F Am Dm F C7 F F7

ຊ້ຳ ເບິ່ງ ໜ້າ ເສີຍ ໆ ທຸກ ຍາມ - ຫຼື ວ່າ - ຄືນ ງາມ ຊັງ ອ້າຍ ເຣື່ອງ - ຫຍັງ... ບອກ

C

23 B♭ F Am

ມາ ບອກ ມາ ເຖີດ ນ້ອງ ຫືວ ໃຈ ສິ່ ຫ້ອງ ແບ່ງ ເປັນ ຫຼາຍ - ທາງ ອ້າຍ

27 Dm Gm Am C7

ນີ້ ບໍ່ ຄຽດ ດອກ ນາງ ຂໍ ພຽງ ແຕ່ ທາງ - ນ້ອງ ນັ້ນ - ບອກ ມາ... ທີ່

D

31 F Am Dm B♭ Gm B♭ C7

ຮັກ ນ້ອງ - ຊັງ ອ້າຍ ນີ້ ເຣື່ອງ - ໃດ ນ້ອງ ຈຶ່ງ ໄດ້ ຈາກ ອ້າຍ - ໄປ ຫຼື ວ່າ ອ້າຍ ນີ້ ຈົນ ເງິນ -

37 F Am Dm F C7 To Coda F

ຕຣາ ບໍ່ ໄດ້ ພາ ເພິນ ອຸ ຣາ - ຫຼື ຂວັນ - ຊິ ວາ ຊັງ ອ້າຍ ເຣື່ອງ - 1. ໃດ... (Solo verse B)

Coda

F

42 F C7 F C7 F Dm F

2. ໃດ ຫຼື ຂວັນ - ຊິ ວາ ຊັງ ອ້າຍ ເຣື່ອງ - ໃດ... ລາ ລາ ລ່າ ລ້າ ລາ ລ່າ ລາ ລາ ລ່າ

48 Dm F C7 F C7 F

ລ້າ ລາ ລ່າ ລາ ລາ ລ່າ ລາ - ລາ - ລ້າ ລາ ລາ ລ່າ ລາ - ລາ - ລ້າ ລາ ລາ ລ່າ

Repeat 'till ade out...

# ຊັງອ້າຍເຣື່ອງໃດ

Key : F
Soul

ເນື້ອຮ້ອງ & ທຳນອງ : ສຸວັນ ສຸວັນນະທາຊ
ນັກຮ້ອງຕົ້ນສະບັບ : ຄຳພຸດ ເຄນກິດຕິສັກ

1966

ລາລ່າລ້າ ລາລ່າລ້າ ລາລ່າລ້າ

1) ທີ່ຮັກ ຫັນໜ້າມາເວົ້າກັນກ່ອນ
ນ້ອງຢ່າໄດ້ຟ້າວຕັດຮອນ ຫາແຕ່ບ່ອນແຍກທາງໜີໄປ
ນ້ອງຊັງ ອ້າຍນີ້ເຣື່ອງໃດ
ເປັນຫຍັງບໍ່ໄຂ ບອກອ້າຍຈັກຄຳ

2) ທີ່ຮັກ ຫຼືນ້ອງມີຄູ່ຄອງໃໝ່
ນ້ອງຈຶ່ງໄດ້ຕັດສິນໃຈ ເຮັດໃຫ້ອ້າຍມີໃຈຊອກຊ້ຳ
ເບິ່ງໜ້າ ເສີຍໆທຸກຍາມ
ຫຼືວ່າຄືນງາມ ຊັງອ້າຍເຣື່ອງຫຍັງ

• | ບອກມາ ບອກມາເຖີດນ້ອງ
ຫືອໃຈສີ່ຫ້ອງ ແບ່ງເປັນຫຼາຍທາງ
ອ້າຍນີ້ ບໍ່ຄຽດດອກນາງ
ຂໍພຽງແຕ່ທາງ ນ້ອງນັ້ນບອກມາ

3) ທີ່ຮັກ ນ້ອງຊັງອ້າຍນີ້ເຣື່ອງໃດ
ນ້ອງຈຶ່ງໄດ້ຈາກອ້າຍໄປ ຫຼືວ່າອ້າຍນີ້ຈົນເງິນຕຣາ
ບໍ່ໄດ້ ພາເພີນອຸຣາ
ຫຼືຂວັນຊີວາ ຊັງອ້າຍເຣື່ອງໃດ...

ລາລ່າລ້າ ລາລ່າລ້າ ລາລ່າລ້າ

# ວັງວຽງແດນສວັນ

ເນື້ອຮ້ອງ & ທຳນອງ : ສ. ບົວລະພັນ

ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳພ້າ

~1970


















# ວັງວຽງແດນສວັນ

Key : Bb
Lamvong Rumba

ເນື້ອຮ້ອງ & ທຳນອງ : ສ. ບົວລະພັນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳພ້າ

~1970

1) ວັງວຽງ ເປັນແດນສວັນ
ສຸກສັນ ເມື່ອໄດ້ມາຢູ່
ເພື່ອນມິດ ມາກມາຍໝູ່ຄູ່
ຊື່ນຊູ ສນຸກສຸກສັນ

2) ຜາແດງ ເຈົ້າແຫ່ງສັກສິດ
ສຖິດ ວັງວຽງຄົງໝັ້ນ
ຖ້ຳຊາງ ຖ້ຳນອນພູບານ
ຕຣະການ ສວຍງາມຈັບໃຈ

• | ຍາມມື້ແລງ ລົງຫຼິ້ນນ້ຳຊອງ (ຊ້ຳ)
ຄວາມເມື່ອຍ ຄວາມໝອງ
ໃຫ້ມັນ ລ່ອງລອຍຫາຍໄປ
ວັນເສົາອາທິດ ໝູ່ຄູ່ມິດມາຮ່ວມນ້ຳໃຈ
ຈະຈາກໄປໃສ ຫົວໃຈຍັງອາລັຍຫາ

3) ວັງວຽງ ນິ່ງໃນເມືອງລາວ
ສາວໆ ກໍງາມເປັນນິ່ງ
ນ້ຳໃຈ ສຸດແສນຊາບຊຶ້ງ
ຂ້າຈຶ່ງ ຮັກວັງວຽງເອີຍ...

# ບຸງພ້າວສາວງາມ

ເນື້ອຮ້ອງ & ທຳນອງ : ສ. ມະນີແສງ

ນັກຮ້ອງຕົ້ນສະບັບ : ກອບແກ້ວ ປ່ຽມມະໄລ (ສຸວັນ ທັມມະວົງສາ ?) ~1970







ບຸງ ພ້າວສາວງາມ ດັ່ງ ນາງ ສ ວັນ ເທ ອາ ອິງ ໃດແດ່ງ ປັ້ນ ສ້າງ ສັນ ນ້ອງງາມໜັກ ໜາ ເປັນ ເທ




ພີ ທີ່ ງາມ ເດັ່ນ ເຢັນ ຕາ ໃຜ ເຫັນ ກໍ ປາ ຖ ນາ ແກ້ວ ຕາ ໄອ້ ແນບ ດວງ ໃຈ...




ບຸງ ພ້າວສາວ ເອີຍ ສາວ ຢ່າ ເມີນ ໜາງ ຈົ່ງ ເຫັນຫົວ ໃຈ ອ້າຍ ຕັ້ງ ຮັກນາງ ບໍ່ ໄດ້ໜ່າຍ ໜີ ອ້າຍຍັງ




ຮັກ ຮັກ ສາວ ເຈົ້າ ດັ່ງ ຊີ ວີ ຈະ ຂໍ ມອບ ຊີ ວິດ ນີ້ ໃຫ້ ສາວ ບຸງ ພ້າວ ຄຽງ ນອນ...




ໝູ່ນ ວຽງ ຈັນ ຝັນ ໃຝ່ ຄອນ ຫາ______ອ້າຍເກືອບເປັນ ບ້າ ບາງ ຄັ້ງ ເປັນ ລືມ ຫົວ ໃຈ ໄຫວ ຫວັ່ນ ສຸດ ຈະ




ຮັກ ຮັກສາວເຈົ້າດັ່ງ ຊີ ວັນ ຫາກໄດ້ ຄູ່ ຄຽງຈອມ ຂວັນ ຈະ ຮັກ ນ້ອງ ໝັ້ນເໝືອນຈັນ ຄູ່ ດາວ...




ບຸງ ພ້າວສາວ ເອີຍ ສາວ ເຄີຍ ຍິ້ມ ຫວານ_____ ຫົວ ໃຈ ອ້າຍ ຫວັ່ນ ລຳ ພັນ ຝັນ ເພີ້ ຄອນ ຄາງ ຫາກໄດ້




ສາວ ໄດ້ ສາວເຈົ້າ ມາແນບ ຂ້າງ ອ້າຍຈະ ບໍ່ ເທ ທັນ ຫ່າງ ຈະ ຮັກ ນາງນ້ອງເຈົ້າ ຜູ້ ດຽວ...(Solo verse B)




ດຽວ... (Coda) ________________ rall...__________

# ບຸງພ້າວສາວງາມ

Key : Ab
Slow Bolero

ເນື້ອຮ້ອງ & ທຳນອງ : ສ. ມະນີແສງ
ນັກຮ້ອງຕົ້ນສະບັບ : ກອບແກ້ວ ປ່ຽມມະໄລ (ສຸວັນ ທັມມະວົງສາ ?)

~1970

1) ບຸງພ້າວສາວງາມ ດັ່ງນາງສວັນ
ເທວາອົງໃດແຕ່ງປັ້ນ ສ້າງສັນນ້ອງງາມໜັກໜາ
ເປັນເທພີ ທີ່ງາມເດັ່ນເຢັນຕາ
ໃຜເຫັນກໍປາຖນາ ແກ້ວຕາໄວ້ແນບດວງໃຈ

2) ບຸງພ້າວສາວເອີຍ ສາວຢ່າເມີນໝາງ
ຈົ່ງເຫັນຫົວໃຈອ້າຍຕັ້ງ ຮັກນາງບໍ່ໄດ້ໜ່າຍໜີ
ອ້າຍຍັງຮັກ ຮັກສາວເຈົ້າດັ່ງຊີວີ
ຈະຂໍມອບຊີວິດນີ້ ໃຫ້ສາວບຸງພ້າວຄຽງນອນ

• ໜຸ່ມວຽງຈັນ ຝັນໃຝ່ຄອນຫາ
ອ້າຍເກືອບເປັນບ້າ ບາງຄັ້ງເປັນລົມຫົວໃຈໄຫວຫວັ່ນ
ສຸດຈະຮັກ ຮັກສາວເຈົ້າດັ່ງຊີວັນ
ຫາກໄດ້ຄູ່ຄຽງຈອມຂວັນ ຈະຮັກນ້ອງໝັ້ນເໝືອນຈັນຄູ່ດາວ

3) ບຸງພ້າວສາວເອີຍ ສາວເຄີຍຍິ້ມຫວານ
ຫົວໃຈອ້າຍຫວັ່ນ ລຳພັນຝັນເພີ້ຄອນຄາງ
ຫາກໄດ້ສາວ ໄດ້ສາວເຈົ້າມາແນບຂ້າງ
ອ້າຍຈະບໍ່ເຫຫັນຫ່າງ ຈະຮັກນາງນ້ອງເຈົ້າຜູ້ດຽວ...

# ເສັຽແຮງຮັກ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣີວັນ

ນັກຮ້ອງຕົ້ນສະບັບ : ຄຳເຕີນ ຊານຸບານ

1968

































# ເສັຽແຮງຮັກ

Key : F
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ
ບັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1968

1) ເສັຽແຮງເຝົ້າຮັກ ນາງສຸດຫົວໃຈ
ເສັຽແຮງຝັນໃຝ່ ເສັຽແຮງໝາຍປາຖນາ
ບໍ່ເຄີຍຄິດເລີຍ ຈະຊ້ຳອຸຣາ
ແຕ່ແລ້ວອະນິດຈາ ຕ້ອງກັບມາເສົ້າໃຈ

2) ຮູ້ພຽງວ່ານ້ອງ ນາງຈະວິວາ
ເໝືອນດັ່ງຟ້າຜ່າ ນ້ຳຕາໄຫຼຕົກຊວງໃນ
ຄິດເຖິງຄັ້ງເຮົາ ເຄີຍຮັກຮ່ວມໃຈ
ສຸກລົ້ນຣືທັຍ ເຫດໃດຈຶ່ງປ່ຽນອື່ນ

• ຜູ່ໃຫຍ່ ຊ່າງໂຫດຮ້າຍແທ້ໜໍ
ຕັດຄວາມຮັກ ສອງເຮົາລົງຄຳໃຈນໍໃຈຂອງຄືນ
ສຸດທີ່ຮັກ ເຈົ້າກໍຄົງໝອງໝົ່ນ
ຄົງຄິດກັງວົນ ຫຼືນາງເປັນສຸກໃຈ

3) ເຫັນພຽງບັດນ້ອງ ເຊີນສູ່ວິວາ
ອ້າຍຍັງກົ້ມໜ້າ ດົ້ນມາເພື່ອຮ່ວມອວຍໄຊ
ສຸກສັນຮ່ວມກັນ ເຖິດໝາດວງໃຈ
ຂ້ານີ້ຂໍໄກ ປວດໃຈກໍຈຳທົນ...

# ສເນສາວ VIETNAM

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງສ໌

1968






























# ສເນສາວວຽດນາມ

Key : Gb
Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງສ໌

1968

| | | |
|---|---|---|
| 1) | ເຄີຍເຫັນແອ໋ນຢູ່ | ທຸກວັນເວລາ |
| | ໃຈປຣາຖນາ | ບໍ່ກ້າຈະເອີ່ຍອະຈິ |
| | ຫຼົງຮັກຫຼົງປອງ | ມາຕັ້ງສອງປີ |
| | ໂມດມິ່ນເປັນຣາຊິນີ | ຊ່ອຍທີແອ໋ນເອີຍ |
| 2) | ທຸກຄືນຊິມອ່າ | ແອ໋ນງາມເໝືອນຈັນ |
| | ແລ້ວເກັບໄປຝັນ | ກະສັນຢາກຊື່ນຢາກເຊີຍ |
| | ຫາກຮູ້ແລ້ວແອ໋ນ | ຢ່າໄດ້ທຳເສີຍ |
| | ໃຈອັ່ນເທື່ອງແອ໋ນແລ້ວເອີຍ | ບຽດຄິ່ງແງ້ຄິ່ງ |
| • | ເດນໄນ | ແສງຈັນສາດສ່ອງ |
| | ຄິ່ງແດບເໝືອນນ້ອງ | ເນື້ອທອງລະອໍອິງ |
| | ຕໍ່ໃຫ້ນາງຟ້າ | ເທວາພຣະອິນນຳສິ່ງ |
| | ຮັບຮອງຕ້ອງອາຍໂສມຍິງ | ຢືນຊິງຫຼົງຊົມແອ໋ນແນ່ |
| 3) | ອ່ຽວແອ໋ນຝັງຈິດ | ເປັນມິດຄູ່ໃຈ |
| | ບໍ່ເຄີຍເຫັນໃຜ | ວິໄລບອກໃຫ້ແອ໋ນແງ້ |
| | ຫາກນ້ອງໃຈດຳ | ທຳເສີຍມິແລ |
| | ອັ່ນຄິງເຈດໂອ່ຍແນ່ໆ | ບຽດຄິ່ງແງ້ຄິ່ງ... |

# ໃຝ່ຮັກ

ເນື້ອຮ້ອງ & ທຳນອງ : (..?..)

ນັກຮ້ອງຕົ້ນສະບັບ : ຄານ ຄຳປະດິດ ~1970

Slow (♩ = 64)

A B E F♯m A G♯m B C♯m A

(Intro) ______

**A**

B7 E G♯7 C♯m F♯m A

ໃຝ່ ຮັກ ໃຝ່ ຫາ ນ້ອງ ມາ ແອບ ອິງ ໃຝ່ ຮັກ ຍອດ ຍິງ ຮັກ ຈິງ ໝາຍ ໝັ້ນ

B C♯m E G♯m C♯m B E A

ຢາກຄຽງ ຄູ່ - ດາ ຣາ___ ຢາກ ຈະ ພາ ສຸກ ສັນ ທຸກ ຄືນ ວັນ ຢາກພານ ພົ້ນ ນາງ...

**B**

B7 E G♯7 C♯m F♯m A

ຢູ່ ສູງ ໝັກ ໝາເໝືອນ ຟ້າ ແລະ ດິນ ປຽບເໝືອນເພັດ ນິນ ຊັບ ສິນ ລົ້ນ ອັ່ງ

B C♯m E G♯m C♯m B E A

ຢູ່ ຕຣະກຸນ ຜູ່ ດີ___ ຊື່ ນາ ຣີ ກໍ - ດັງ ເພາະນ້ອງນາງ ສຸດ ງາມ ນິ ຍົມ...

**C**

E G♯7 C♯m B E G♯m

ໄກ ກັນ ເຫຼືອ ເກີນ ນາງ ເຫີນເຫາະ ຟ້າ______ ຂ້າ - ຮັກ ນາງ ມາ ຮັກ ຂ້າ ບໍ່ ສິ້ນ

C♯m A F♯m B A E A

ຕ່ຳ ສັກ ສິ້ນ ດີ ຊາດ ນີ້ ຣະ ທົມ_____ ເກັບຄວາມ ຣະ ບົມ ບົ່ມ ໃນ ທົ່ວ ໃຈ...

**D**

B7 E G♯7 C♯m F♯m A

ຊາດ ໜ້າ ເຖິດ ໝາ ຂໍ ຂ້າ ຈົ່ງ ມີ ຊາດ ນີ້ ລາ ທີ ເພາະ ສີ ໝອງ ໄໝ້

B C♯m E G♯m C♯m B E A

ສຸກ ສົມ ຫວັງ ເຖິດ ນ້ອງ___ ຈົ່ງປອງດອງ ໝັ້ນ - ໝາຍ ສົມ ທົ່ວ ໃຈ ຈົ່ງ ໄດ້ ຮັກ ຈິງ...

To Coda 1. (Solo verse B)

Coda

**E**

2. E C♯m E A B F♯m G♯m B7 E

ຈິງ... (Coda) ______

Fine

# ໃຝ່ຮັກ

Key : E
Slow

ເນື້ອຮ້ອງ & ທຳນອງ : (..?..)
ນັກຮ້ອງຕົ້ນສະບັບ : ຄານ ຄຳປະດິດ

~1970

1) ໃຝ່ຮັກໃຝ່ຫາ ນ້ອງມາແອບອີງ
ໃຝ່ຮັກຍອດຍິງ ຮັກຈິງໝາຍໝັ້ນ
ຢາກຄຽງຄູ່ດາຣາ ຢາກຈະພາສຸກສັນ
ທຸກຄືນວັນ ຢາກພານພົ້ນນາງ

2) ຢູ່ສູງໜັກໜາ ເໝືອນຟ້າແລະດິນ
ປຽບເໝືອນເພັດນິນ ຊັບສິນລົ້ນອັ່ງ
ຢູ່ຕຣະກູນຜູ້ດີ ຊື່ນາຣີກໍດັງ
ເພາະນ້ອງນາງ ສຸດງາມນິຍົມ

• ໄກກັນເຫຼືອເກີນ ນາງເຫີນເຫາະຟ້າ
ຂ້າຮັກນາງມາ ຮັກຂ້າບໍ່ສົມ
ຕ່ຳສັກສິ້ນດີ ຊາດນີ້ຣະທົມ
ເກັບຄວາມຣະບົມ ບົ່ມໃນຫົວໃຈ

3) ຊາດໜ້າເຖີດໜາ ຂໍຂ້າຈິ່ງມີ
ຊາດນີ້ລາທີ ເພາະສີໝອງໄໝ້
ສຸກສົມຫວັງເຖີດນ້ອງ ຈິ່ງປອງດອງໝັ້ນໝາຍ
ສົມຫົວໃຈ ຈິ່ງໄດ້ຮັກຈິງ...

# ສອນດອກໄມ້ໃນອະດີດ

ເນື້ອຮ້ອງ & ທຳນອງ : ຄຳເຕີມ ຊານຸບານ

ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1968



































# ສອນດອກໄມ້ໃນອະດີດ

Key : A
Slow

ເນື້ອຮ້ອງ & ທຳນອງ : ຄຳເຕີມ ຊານຸບານ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1968

1) ທີ່ສອນດອກໄມ້ ຂອງນາງກ່ອນນັ້ນ
ເຈົ້າຄຶງຕື້ນຕັນ ເລົ່າຄວາມຝັນໃຫ້ຟັງ
ວ່າອະນາຄົດ ນ້ອງຢາກໜີສຸດຟ້າໄກຫ່າງ
ຢູ່ເມືອງນອກແລ້ວສ້າງ ແຕ່ຄຸນງາມຄວາມດີ

2) ທີ່ສອນດອກໄມ້ ອ້າຍຍັງຈືດຈຳ
ໄດ້ຍິນນ້ຳຄຳ ສຸດຫວານລ້ຳອະຈີ
ເມື່ອຢູ່ກັນສອງ ອ້າຍຢາກປອງຈູບນ້ອງເທື່ອ
ແຕ່ບໍ່ກ້າຈັກທີ ດ້ອຍກຽດສັກສີຂ້ານີ້ດັ່ງກາ

• ໂອ່ ໂອ້ ໂອ້ ໂອ ນ້ອງເອີຍ
ຢ່າເລີຍລືມຄຳພໍ່າວອນ ນະແກ້ວຕາ
ຄັ້ງສຸຣິຍັນ ຈອນລັບທິວໄມ້ປ່າ
ທີ່ອຸທຍານນັ້ນໜາ ສອງເຮົາຮ່ວມເດັດດອກໄມ້

3) ພາບສອນດອກໄມ້ ວິໄລໜັກໜາ
ເມື່ອດອກຟ້າມາ ປະດັບຍິ່ງແຈ່ມໃສ
ຢາກເອີາບຸບຜາ ທີ່ເກັບມາເໜັບໄວ້ກາງໃຈ
ຈຳຝັງຈິດຈົນຕາຍ ໂອ້ສອນດອກໄມ້ໃນອະດີດເອີຍ...

# ຍອດຮັກ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ

ນັກຮ້ອງຕົ້ນສະບັບ : ຈັນທະຮາ ອຸເທນສັກດາ

1970

Soul Pop Rock (♩ = 110)

G

(Intro) ___ 8 ເໝືອນ ໃຈ ຈະ

A
1 G Bm Em
ຂາດ ເປັນ ຕອນ___ ເໝືອນ ດັ່ງ ໄດ້ ນອນ ກອງ ໄຟ___ ຫຼັບ ຕາ ມືນ

5 Am A A7 D7
ຕາ ຍາມ ໃດ___ ເຫັນ ພາບ ຈອມ ໃຈ ຫຼອກ ຫຼອນ...___ ເໝືອນ ມີນ ສ

B
9 G Bm Em
ກົດ ດວງ ໃຈ___ ເມື່ອ ຍາມ ຫ່າງ ໄກ ອາ ວອນ___ ບໍ່ ເປັນ ອັນ

13 Am D7 G
ກິນ ອັນ ນອນ___ ໜາວ ໆ ຮ້ອນ ໆ - ບໍ່ ວາຍ... ນ້ອງ ຄິດ ເຖິງ

C
17 G7 C D7 Bm
ອ້າຍ ຫຼື ບໍ່___ ແນ່ ນອນ ລະ ອໍ ຈອມ ໃຈ___ ໂລກ ນີ້ ຄືງ

21 Em C A D7
ບໍ່ ມີ ໃຜ___ ເປັນ ທາດ ແຫ່ງ ໃຈ ເຈົ້າ ແລ້ວ... ຍອດ ຮັກ ຍອດ

D
25 G Bm Em
ສຸດ ບູ ຊາ___ ຍອດ ຂວັນ ຊີ ວາ ແນ່ ແນ່ວ___ ບໍ່ ມີ ຍິງ

29 Am To Coda D7 G A G A G
ໃດ ອີກ ແລ້ວ___ ນ້ອງ ເປັນ ຂວັນ ແກ້ວ - ແວວ ໃຈ... (Instruments) ___

E
34 A D.S. (transpose +2)
(Intro bis) ___ 8 ເໝືອນ ໃຈ ຈະ...

Coda

F
38 E A E A (Repeat 'till fade out...)
ນ້ອງ ເປັນ ຂວັນ ແກ້ວ - ແວວ ໃຈ... - ນ້ອງ ເປັນ ຂວັນ ແກ້ວ - ແວວ ໃຈ...

# ຍອດຮັກ

Key : G-A
Soul Pop Rock

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຈັນທະຣາ ອຸເທນສັກດາ

1970

1) ເໝືອນໃຈຈະຂາດ ເປັນຕອນ
ເໝືອນດັ່ງໄດ້ນອນ ກອງໄຟ
ຫຼັບຕາມືນຕາ ຍາມໃດ
ເຫັນພາບຈອມໃຈ ຫຼອກຫຼອນ

2) ເໝືອນມີນສກົດ ດວງໃຈ
ເມື່ອຍາມຫ່າງໄກ ອາວອນ
ບໍ່ເປັນອັນກິນ ອັນນອນ
ໜາວໆຮ້ອນໆ ບໍ່ວາຍ

• | ນ້ອງຄິດເຖິງອ້າຍ ຫຼືບໍ່
ແມ່ນອນລະອໍ ຈອມໃຈ
ໂລກນີ້ຄືງບໍ່ ມີໃຜ
ເປັນທາດແຫ່ງໃຈ ເຈົ້າແລ້ວ

3) ຍອດຮັກຍອດສຸດ ບູຊາ
ຍອດຂວັນຊີວາ ແນ່ແນ່ວ
ບໍ່ມີຍິງໃດ ອີກແລ້ວ
ນ້ອງເປັນຂວັນແກ້ວ ແວວໃຈ...

# ຟ້າເທົ່ານັ້ນ

ເນື້ອຮ້ອງ & ທຳນອງ : ດ. ຕຣີສິລ

ນັກຮ້ອງຕົ້ນສະບັບ : ບຸນທົງ ວົງສາລີ

1968






























# ຟ້າເທົ່ານັ້ນ

Key : F
Slow Bolero

ເນື້ອຮ້ອງ & ທຳນອງ : ດ. ຕຣິສິລ
ນັກຮ້ອງຕົ້ນສະບັບ : ບຸນທິງ ວິງສາລີ

1968

1) ມີຟ້າ ເທົ່ານັ້ນ
ທີ່ຮູ້ທັນ ອ້າຍຮັກນ້ອງນາງພຽງໃດ
ຟ້າເທົ່ານັ້ນ ເຫັນໃນຫົວໃຈ
ທຸກຄືນແລະວັນ ອອນໄຫວ້ນ້ຳຕາໄຫຼນອງ

2) ພຽງຟ້າ ເທົ່ານັ້ນ
ເປັນພະຍານ ຊີວັນອ້າຍຄືນອນນ້ອງ
ຟ້າເທົ່ານັ້ນ ແຫງນຄຳຫຼຽວມອງ
ຮູ້ວ່າອິທັຍທຸກທ້ອງ ມີນ້ອງຕລອດໄປ

• ຟ້າເທົ່ານັ້ນ ຈະເຕືອນວ່າໃຜລືມກ່ອນ
ຟ້າເທົ່ານັ້ນ ຈະຫຼອນເມື່ອຕອນຮັກຄາຍ
ຟ້າເທົ່ານັ້ນ ທີ່ຈະເນດຕາເຫັນໃຈ
ໃຫ້ຮັກ ຢ່າຈາງ

3) ຍັງຟ້າ ເທົ່ານັ້ນ
ຫາກສັມພັນ ຮັກເຮົາເລື່ອນເລີຍເຫີຍຫ່າງ
ຟ້າເທົ່ານັ້ນ ເຝົ້າເຕືອນມີອາງ
ໃຜຍັງພັກດີ ເໝືອນດັ່ງສັນຍາໃຫ້ໄວ້.....

# ພວງມາລັຍນ້ຳໃຈ

ເນື້ອຮ້ອງ & ທຳນອງ : ໄພວັນ ເມກອາຣຸນ
ນັກຮ້ອງຕົ້ນສະບັບ : ໄພວັນ ເມກອາຣຸນ

1984-85






























# ພວງມາລັຍນ້ຳໃຈ

Key : Bb
Lamvong Lao

ເນື້ອຮ້ອງ & ທຳນອງ : ໄພວັນ ເມກອາຣຸນ
ນັກຮ້ອງຕົ້ນສະບັບ : ໄພວັນ ເມກອາຣຸນ

1984-85

(ສອຍ)
ພວງມາລັຍເຈົ້າເອີຍ ພວງມາລັຍນ້ຳໃຈ
ພວງມາລັຍເຈົ້າເອີຍ ພວງມາລັຍນ້ຳໃຈ
ອ້າຍສົ່ງມາໃຫ້ຢູ່ບົນເວທີ ສ່ວນເພງນີ້ຂໍມອບແດ່ອ້າຍ
ຫາກຟັງແລ້ວຂໍຈົ່ງສຸກໃຈ ສົດຊື່ນແຈ່ມໃສຮື່ນເຮີງຣິດີ
ຂໍຂອບໃຈທີ່ຍັງເມດຕາ ມອບສົ່ງມາດ້ວຍໃຈປຣານີ
ຂໍຝາກເພງນີ້ ມອບຕອບແທນແຮງໃຈ...

1) ຫາກສິນໃຈ ສົ່ງຈິດໝາຍຂໍຟັງ
ເພງຈີນເພງຝຣັ່ງ ຮ້ອງໃຫ້ຟັງກໍໄດ້
ຄືນວັນນີ້ ແສນສນຸກທົ່ວໃຈ
ຄ່ຳຄືນນີ້ ແສນສຸກໃຈໜັກໜາ
ມີແຟນເພງມາ ຊ່ວຍໃຫ້ກຳລັງໃຈ...

(ສອຍ)

2) ຂໍຂອບໃຈ ແຟນເພງທັງຫຼາຍ
ທັງຍິງແລະຊາຍ ທີ່ໄດ້ມີຄວາມປຣານີ
ຫາກວັນໃດ ທ່ານຢາກມີສຸຂີ
ເວລາໃດ ຖ້າຢາກມີສຸກສັນ
ເປີດຟັງເພງໄພວັນ ແລ້ວຈະໄດ້ສຸກເອີຍ...

# ແກ້ວລືມຄອນ

ເນື້ອຮ້ອງ & ທຳນອງ : ສ. ມະນີແສງ
ນັກຮ້ອງຕົ້ນສະບັບ : ສາຍພິນ ພິລືມທອນ

1969

Slow Bolero (♩ = 62)

C♯ F♯m C♯m A E F♯m B C♯m G♯7

(Intro) ______ ແກ້ວ -

**A**

1 C♯m A C♯m A E G♯7

ເອີຍ ເຈົ້າ ເປັນ ຫຍັງ ລືມ ຄອນ ຫຼືງ ລືມ ບ່ອນ ເຄີຍ ນອນ ເຄີຍ ຢູ່ ອາ ສັຍ ຈາກ ຄອນ

5 B E C♯7 F♯m A G♯7

ນີ້ ແລ້ວ ໜີ ໄປ ມີ ຄອນ ໃໝ່ ເຈົ້າ ຄຽດ ເຈົ້າ ຊັງ ຜູ່ ໃດ ໜີ ໄປ ຢູ່ ໃສ ໜໍ ເຈົ້າ... ແກ້ວ -

**B**

9 C♯m A C♯m A E G♯7

ເອີຍ ເຈົ້າ ເປັນ ຫຍັງ ລືມ ຮັງ ໄປ ບໍ່ ສັ່ງ ລືມ ຮັງ ເມື່ອ ຄັ້ງ ກ່ອນ ເກົ່າ ຄຽດ ໃຫ້

13 B E C♯7 F♯m G♯m C♯m

ໃຜ ໝອງໃຈ ອັນ ໃດ ໜໍ ເຈົ້າ ຫຼື ມີ ໃໝ່ ແລ້ວລືມ ເຮົາ ນ້ອງ ເຈົ້າ ແມ່ ສາ ລິ ກາ... ຈາກໄປ

**C**

17 C♯ F♯m C♯m A E G♯7

ແລ້ວ ໜໍ ແມ່ ແກ້ວ ລືມ ຄອນ ລືມ ທຸກ ບ່ອນ ລືມ ຄອນ ລືມ ຄືນ ລັງ ມາ ລືມ ເຂົ້າ

21 B C♯m B E G♯m C♯m G♯7

ນ້ຳ ກິງທອງເຄີຍ ຢູ່ ສຸ ຂາ ໄປ ແລ້ວ ບໍ່ ຫອນ ກັບ ມາ ແມ່ ສາ ລິ ກາ ຫຼືງ ຮັງ... ແກ້ວ -

**D**

25 C♯m B C♯m A E G♯7

ເອີຍ ຫາກ ສິ້ນ ຄືນ ອຸ້ມ ຊູ ຈື່ງ ຄືນ ສູ່ ຄອນ ເດີມ ນ້ອງ ຢູ່ ແດ່ ຫຼັງ ຍັງ ຄອຍ

29 B C♯m C♯7 To Coda F♯m B C♯m

1.

ຖ້າ ແມ່ ສາ ລິ ກາ ຫຼືງ ຮັງ ສີ່ ຫ້ອງທີ່ອ ໃຈ ອ້າຍ ຍັງ ເປັນ ຮັງ ຕ້ອນ ຮັບ ແກ້ວ ເອີຍ... (Solo verse B)

**E** Coda

33 F♯m B C♯m A G♯m B C♯m G♯7 C♯

2.

...ຍັງ ເປັນ ຮັງ ຕ້ອນ ຮັບ ແກ້ວ ເອີຍ... (Coda) ______

Fine

# ແກ້ວລືມຄອນ

Key : C#m
Slow Bolero

ເນື້ອຮ້ອງ & ທຳນອງ : ສ. ມະນີແສງ
ນັກຮ້ອງຕົ້ນສະບັບ : ສາຍພິນ ພິລົມທອນ

1969

1) ແກ້ວເອີຍ ເຈົ້າເປັນຫຍັງລືມຄອນ
ຫຼືງລືມບ່ອນ ເຄີຍນອນເຄີຍຢູ່ອາສັຍ
ຈາກຄອນນີ້ ແລ້ວໜີໄປມີຄອນໃໝ່
ເຈົ້າຄຽດເຈົ້າຊັງຜູ່ໃດ ໜີໄປຢູ່ໃສໜໍເຈົ້າ

2) ແກ້ວເອີຍ ເຈົ້າເປັນຫຍັງລືມຮັງ
ໄປບໍ່ສັ່ງ ລືມຮັງເມື່ອຄັ້ງກ່ອນເກົ່າ
ຄຽດໃຫ້ໃຜ ໝອງໃຈອັນໃດໜໍເຈົ້າ
ຫຼືມີໃໝ່ແລ້ວລືມເຮົາ ນ້ອງເຈົ້າແມ່ສາລິກາ

• | ຈາກໄປແລ້ວ ໜໍແມ່ແກ້ວລືມຄອນ
ລືມທຸກບ່ອນ ລືມຄອນລືມຄືນລ້ຽງມາ
ລືມເຂົ້ານ້ຳ ກິງທອງເຄີຍຢູ່ສຸຂາ
ໄປແລ້ວບໍ່ທອນກັບມາ ແມ່ສາລິກາຫຼືງຮັງ

3) ແກ້ວເອີຍ ຫາກສິ້ນຄືນອຸ້ມຊູ
ຈິ່ງຄືນສູ່ ຄອນເດີມນ້ອງຢູ່ແຕ່ຫຼັງ
ຍັງຄອຍຖ້າ ແມ່ສາລິກາຫຼືງຮັງ
ສີ່ຫ້ອງຫົວໃຈອ້າຍຍັງ ເປັນຮັງຕ້ອນຮັບແກ້ວເອີຍ...

# ສຸດທີ່ຮັກ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ

ສະບັບສຽງຂັບຮ້ອງຂອງ : ພິມມະ ພິມມະສອນ & ສິນພອງ ຊຶງມີໄຊ

19??






























# ສຸດທີ່ຮັກ

Key : C
Foxtrot

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ & ສີນຟອງ ຊີງມີໄຊ

19??

1) (ຊ) ສຸດທີ່ຮັກ ອ້າຍຮັກນ້ອງຍິ່ງ
(ຍ) ຫວັ່ນຈິງໆ ຮັກລວງຫຼືໃດ
(ຍ) ຢ່າມາລໍ້ ໃຫ້ນ້ອງອ່ອນໃຈ
(ຊ) ຮັກຈິງຈັງ ຮັກຈິງໃຈຈິ່ງເອີ່ຍມາ

2) (ຍ) ບໍ່ເຄີຍຫຼີງ ຫຼີງນໍ້າມິນງ່າຍ
(ຊ) ຍອດດວງໃຈ ອ້າຍໃຫ້ສັນຍາ
(ຊ) ຮັກຈິງແທ້ ແນ່ດັ່ງສັດຈາ
(ຍ) ຢ້ານຮັກພາ ໃຫ້ນໍ້າຕານ້ອງຫຼັ່ງນອງ

• (ຊ) ຫວັ່ນສິ່ງໃດ ຂໍດວງໃຈນ້ອງຢ່າຫວັ່ນ
(ຍ) ຫວັ່ນອ້າຍນັ້ນ ໝາຍລວງໝາຍທິດລອງ
(ຊ) ເຊື່ອເຖິດໝາ (ຍ) ບໍ່ແນ່ໃຈນ້ອງຍັງຂ້ອງ
(ຊ) ເຊື່ອເຖິດນ້ອງ ອ້າຍໝາຍປອງຝາກສັມພັນ

3) (ຍ) ແນ່ຈິງນະ (ຊ) ອໍແນ່ນອນຍິ່ງ
(ຍ) ຫາກບໍ່ຈິງ (ຊ) ນ້ອງຈິ່ງລີງທັນ
(ຍ) ຢ່າລວງນະ (ຊ) ອ້າຍຂໍປະກັນ
(ຊ+ຍ) ສອງດວງໃຈ ຂໍຮັກກັນເທົ່າວັນຕາຍ...

# ສາຍເລືອດລາວ

ເນື້ອຮ້ອງ & ທຳນອງ : ສາຍສມອນ ອິນສີຊຽງໃໝ່ - ຮຽບຮຽງໂດຍ ມະລິຈັນສຸກ ເທບສຸວັນ

ສະບັບສຽງຂັບຮ້ອງຂອງ : ເມລີສາ ລຸນລາວົງ

2021






























# ສາຍເລືອດລາວ

Key : E — ເນື້ອຮ້ອງ & ທຳນອງ : ສາຍສມອນ ອິນສີຊຽງໃໝ່ - ຮຽບຮຽງໂດຍ ມະລິຈັນສຸກ ເທບສຸວັນ
Slow Bolero — ສະບັບສຽງຂັບຮ້ອງຂອງ : ເມລິສາ ລຸນລາວົງ — 2021

1) ສຸກໃຈທີ່ໄດ້ ເກີດໃນດິນລາວ
ສາຍເຊື້ອຊາດລາວ ຄົນລາວຫຼາຍເຜົ່າພົງພັນ
ແຜ່ນດິນກຳເນີດ ກໍ່ເກີດຮັກແພ້ນຜູກພັນ
ຢູ່ແຫ່ງໃດກໍຢາກກັບຫັນ ຖິ່ນຖານບ້ານເກີດເມືອງລາວ

2) ສາຍແຮ່ສາຍບື ນັ້ນຄືດວງໃຈ
ຝັງຢູ່ຂ້າງໃນ ລຸ່ມໃຕ້ພື້ນແຜ່ນທໍຣະນີ
ສາຍເລືອດແລກເກີດ ກົບເກື່ອນຜືນແຜ່ນດິນນີ້
ແມ່ນຊີບວາຍກາຍເປັນທຸລີ ຢາກພູ້ຊີບຢູ່ເມືອງລາວ

• ໂອ້...ລາວ ແດນລາວ ເມືອງລາວສວຍເດັ່ນ
ທຸກຊາດໄດ້ເຫັນ ບໍ່ເວັ້ນຫວນຄືນມາໃໝ່
ທຳມະຊາດສຸດສວຍ ລ່ຳລອຍດ້ອຍຊັບພົງໄພ
ດຸດດັ່ງສວັນສ້າງວາດໄວ້ ຢູ່ໃນສວັນວິມານ

3) ຄົງມີວັນນຶ່ງ ໄດ້ກັບຫວນຄືນ
ບໍ່ຕ້ອງທົນຝືນ ກ້ຳກືນຝືນອີກຕໍ່ໄປ
ຢູ່ໄກສຸດຄວ້າ ຕ່າງແດນເໜືອສຸດຂອບຟ້າ
ພະນົມມືຂໍພອນເທວາ ໃຫ້ກັບມາຜືນແຜ່ນດິນລາວ...

# ຫີນເຫີບແດນງາມ

ເນື້ອຮ້ອງ & ທຳນອງ : ສ. ມະນີແສງ

ນັກຮ້ອງຕົ້ນສະບັບ : ຈັນທີ ສິຣິພອນ

<1970

































# ຫີນເຫີບແດນງາມ

Key : C
Slow

ເນື້ອຮ້ອງ & ທຳນອງ : ສ. ມະນີແສງ
ນັກຮ້ອງຕົ້ນສະບັບ : ຈັນທີ ສີຣິພອນ

<1970

1) ຖິ່ນລຳເນົາເງິບເງື້ອໂງ່ນຫີນ ແວ່ວສຽງສາຍວາຣິນ
ເຊາະຫີນກາງນ້ຳ ຊ່າງງາມເຫຼືອຕາ
ສອງຣິມຟາກຝັ່ງ ແວ່ວດັງສຽງສະກຸນາ
ຈັບຄອນວອນຄູ່ຖາລາ ກາງນ້ຳມີປາຄຽງຄູ່ດູງາມ

2) ແວ່ວຊະນີທີ່ຮ້ອງສົ່ງມາ ກ່ອນເຂົາລຳເນົາແນວປ່າ
ຄ່ຳເຊົ້າເຂົາມາ ຂັນຄູ່ຄຽງຄອນ
ເອື້ອງດອຍຫ້ອຍຢູ່ ຕາມຜາພູ່ເຜີ້ງບິນຕອມ
ສົ່ງກິ່ນຫອມມາອ່ອນໆ ໜ້າອອນຊອນສຸກສົມດວງໃຈ

• ໂອ້ຫີນເຫີບ ເຈົ້າງາມເລີດກວ່າສິ່ງໃດ
ທັມມະຊາດສ້າງໄວ້ ສີລານ້ອຍໃຫຍ່ງາມເຫຼືອຄະນາ
ຫາໃດທຽມເທົ່າ ດັ່ງເຈົ້າອິນປັ້ນແຕ່ງມາ
ງາມແທ້ງາມເດັ່ນໜັກໜາ ໝູ່ສາລິກາຄຽງຄູ່ຄືນຮັງ

3) ຄ່ຳຣາຕຣີເຮໄຮຣະງົມ ດັ່ງສຽງດົນຕຣີຜະສົມ
ແຜ່ວຕາມສາຍລົມ ອ້ອຍອິ່ນອອນຊອນ
ແສງຈັນດັ່ງນິ່ງ ໂຄມສ່ອງເມກໄມ້ດົງດອນ
ຫາຖິ່ນແດນໃດຈະເໝືອນ ຫີນເຫີບຍັງເຕືອນຝັງໃຈບໍ່ລືມ...

# ພອນສົມຣົສ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1964-65

Tango (♩ = 102)

D A D
(Intro)

**A**
1 A D
ບໍ່ ມີ ຂອງ ຂວັນ ___ ຈະ ກຳ ນັນ ມອບ ໃຫ້ ຄູ່ ສາວ ___ ບ່າວ
5 D7 G A7 C
ບອກ ຈາກ ເພງ ຮັກ ເບົາ ໆ ___ ກ່ອມ ເຂືອ ເຈົ້າ ໃຫ້ ສຸ ຂີ...

**B**
9 A D
ໄຫວ້ ວອນ ເທ ວາ ___ ຫວ່ານ ພອນ ມາ ສິງ ໃນ ເພງ ຮ້ອງ ນີ້
13 D7 G A7 D
ໃຫ້ ເປັນ ພອນ ແກ້ວ ມະ ນີ ___ ເນື່ອງ ໃນ ງານ ສູ ຣິ ມຸງ ຄຸນ...

**C**
17 Dm Gm B♭ Dm
ກຽດ ສັນ ເສີນ ຈົ່ງ ເປັນ ຂອງ ເຂືອ ທ່ານ ສຸກ ອະ ນັນ ປ່ຽມ ລາບ ພັນ ພ້ອມ ພູນ
21 Gm Dm Gm A A7
ມອບ ຊີ ວິດ ຝາກ ເຮືອນ ກາຍ ຜູກ ດວງ ໃຈ ຈົນ ນ້ອຍ ມຸ່ນ ຮ່ອມ ໃບ ບຸນ ໃນ ທຳ ວິ ວາ...

**D**
25 A D
ຈົ່ງ ພຽນ ແພງ ຫອມ ___ ໝັ່ນ ຖ ນອມ ຮັກ ໃຫ້ ຄົງ ຄູ່ ຟ້າ
29 D7 G A D
ໃຫ້ ຈົນ ແກ່ ເຖົ້າ ຊະ ຣາ ___ ຕຣາບ ວັນ ຟ້າ ແລະ ດິນ ສ ລາຍ...
(Solo verse A&B)

Coda 𝄌

**E**
33 D A D A D
(Coda)
Fine

# ພອນສິມຮິສ

Key : D
Tango

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1964-65

| | | |
|---|---|---|
| 1) | ບໍ່ມີ | ຂອງຂວັນ |
| | ຈະກຳນັນ | ມອບໃຫ້ຄູ່ສາວບ່າວ |
| | ນອກຈາກ | ເພງຮັກເບົາໆ |
| | ກ່ອນເຂືອເຈົ້າ | ໃຫ້ສຸຂີ |
| 2) | ໄຫວ້ວອນ | ເທວາ |
| | ຫວ່ານພອນມາ | ສິງໃນເພງຮ້ອງນີ້ |
| | ໃຫ້ເປັນ | ພອນແກ້ວມະນີ |
| | ເນື່ອງໃນງານ | ສິຮິມຸງຄຸນ |
| • | ກຽດສັນເສີນ | ຈຶ່ງເປັນຂອງເຂືອທ່ານ |
| | ສຸກອະນັນ | ປ່ຽມລາບພັນພ້ອມພູນ |
| | ມອບຊີວິດຝາກເຮືອນກາຍ | ຜູກດວງໃຈຈິນມ້ອຍມຸ່ນ |
| | ຮ່ວມໃບບຸນ | ໃນຫໍວິວາ |
| 3) | ຈຶ່ງພຽນ | ແພງຫອມ |
| | ໝັ່ນຖນອມ | ຮັກໃຫ້ຄົງຄູ່ຟ້າ |
| | ໃຫ້ຈິນ | ແກ່ເຖົ້າຊະຮາ |
| | ຕຮາບວັນຟ້າ | ແລະດິນສລາຍ... |

# ຢູ່ໄປເຮັດຫຍັງ

ເນື້ອຮ້ອງ & ທຳນອງ : ປ. ດຣີຈັນ & ໂພ ຄູຜ່ອງສີ
ນັກຮ້ອງຕົ້ນສະບັບ : ຄຳເພັຊ ສວັດດີ

1968






























# ຢູ່ໄປເຮັດຫຍັງ

Key : Ab
Slow Bolero

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ & ໂພ ຄຸຜ່ອງສີ
ນັກຮ້ອງຕົ້ນສະບັບ : ຄຳເພັຊ ສວັດດີ

1968

1) ຢູ່ໄປເຮັດຫຍັງ ຄົນຮັກເຂົາຊັງນ້ຳໜ້າ
ຢູ່ໄປເຮັດຫຍັງ ໃຫ້ຄົນຕິສິນນິນທາ
ໂລກນີ້ກວ້າງໃຫຍ່ ຈະໄປໃຫ້ສຸດສາຍຕາ
ຫຼີກຄຳນິນທາ ຫຼີກອາຈາສຽດສີເຈັບໃຈ

2) ຢູ່ໄປເຮັດຫຍັງ ຄົນຮັກຫັນຫຼັງໃຫ້ເຮົາ
ຢູ່ໄປເຮັດຫຍັງ ໃຫ້ເຂົາດ່າວ່າທຳລາຍ
ຂໍຕາຍດາບໜ້າ ບໍ່ມາໃຫ້ເຈັບຊ້ຳໃຈ
ຫຼີກທາງຫ່າງໄກ ຜູ້ຊາຍຫຼາຍໃຈບໍ່ປຣາຖນາ

• ຈະສແວງ ຊອກຊອນຫາຊາຍໃຈຊື່
ທີ່ເຂົາລື ວ່າເດັ່ນແລະສງ່າ
ເອົາມາປະດັບ ປະທັບໄວ້ໃນອຸຣາ
ກໍຍັງດີກວ່າ ທົນຢູ່ກັບຊາຍລໍ້ລວງ

3) ຢູ່ໄປເຮັດຫຍັງ ຄວາມຮັກເຮົາພັງສູນສິ້ນ
ຢູ່ໄປເຮັດຫຍັງ ແຜ່ນດິນມີຊາຍແສນລວງ
ແມ່ນຊີບຈະດັບ ບໍ່ກັບມາຮັກມາຫ່ວງ
ຜູ້ຊາຍແສນລວງ ບໍ່ຂໍຄວງໃຫ້ເສັຽເວລາ...

# ຍິ້ມສເນີ

ເນື້ອຮ້ອງ & ທຳນອງ : ອະນຸສັກ ທັມມະວົງສາ

ນັກຮ້ອງຕົ້ນສະບັບ : ສຸນທະຣາ ແກ້ວ

~1976
































# ຍິ້ມສເມີ

Key : Ab
Slow Bolero

ເນື້ອຮ້ອງ & ທຳນອງ : ອະນຸສັກ ທັມມະວົງສາ
ນັກຮ້ອງຕົ້ນສະບັບ : ສຸນທະຣາ ແກ້ວ

~1976

1) ຍິ້ມສເມີ ເມື່ອເຫັນນ້ອງມີຮັກໃໝ່
ຍິ້ມສເມີ ຍິ້ມສິ່ງດ້ອຍໃຈພັກດີ
ອ້າຍຍິ້ມສເມີ ເມື່ອເຫັນນ້ອງນາງສຸຂີ
ເມື່ອເຫັນເທວີ ສຸຂີກັບຄົນຮັກໃໝ່

2) ຍິ້ມສເມີ ເມື່ອນ້ອງລືມອ້າຍໄດ້ລົງ
ຍິ້ມສເມີ ຍິ້ມບົ່ງເຖິງຄວາມຊ້ຳໃຈ
ອ້າຍຍິ້ມສເມີ ຍິ້ມກັ້ນນ້ຳຕາເອົາໄວ້
ຍິ້ມຢ່າງຈິນໃຈ ສຸດອາລັຍໃນອາສນາ

• ຝືນ ຍິ້ມຢູ່ທຸກທີ
ທັ້ງທີ່ອ້າຍນີ້ ແສນປວດອຸຣາ
ຍິ້ມເພື່ອນ້ອງ ສລອງສາວແບບເງິນຕຣາ
ອ້າຍຍິ້ມເຍີ້ຍຟ້າ ເມື່ອເຫັນຮັກມາໜີໄກ

3) ຍິ້ມສເມີ ອ້າຍຍິ້ມເພື່ອນ້ອງນາງດຽວ
ຍິ້ມສເມີ ຍິ້ມປ່ຽວຂາດຄົນສິນໃຈ
ອ້າຍຍິ້ມສເມີ ຝືນຍິ້ມເມື່ອຕົນປຣາຊັຍ
ຍິ້ມຢ່າງຈິນໃຈ ເພາະນາງລືມໄດ້ລົງຄຳ...

# ຄຳສາບຍິງເສົ້າ

ເນື້ອຮ້ອງ & ທຳນອງ : ສິລ ເມືອງໃຕ້
ນັກຮ້ອງຕົ້ນສະບັບ : ສິນພອງ ຊີງມີເຊ

1969
































# ຄຳສາບຍິງເສົ້າ

Key : Db
Slow

ເນື້ອຮ້ອງ & ທຳນອງ : ສິລ ເມືອງໃຕ້
ນັກຮ້ອງຕົ້ນສະບັບ : ສິມພອງ ຊີງມີໄຊ

1969

1) ຢາດນ້ຳຕາ ໄຫຼນອງດັ່ງນ້ຳລົ້ນຝັ່ງ
ເມື່ອຄວາມຫວັງ ມາສູນສິ້ນຈາກອຸຣາ
ຄົນ ຮັກເມີນໜີໜ້າ
ສັດທາ ຮັກມາສລາຍ

2) ສິ້ນຮັກລົງ ເໝືອນດັ່ງຖືກເພີງເຜົາໄໝ້
ສຸມສຽບໃຈ ຄິດໄປແສນເສົ້າທະວີ
ຄອງ ຮັກມາຫຼາຍປີ
ແລ້ວຍ່ຳຍີ ຫົວໃຈແຫຼກລານ

• ຄຶງເຫັນໃຈຍິງ ເປັນສນາມອາຣົມ
ຈຶ່ງຂ້າຈຶ່ງຂົ່ມ ຈຶ່ງທຳໃຫ້ຂົມດວງມານ
ຫຼິ້ນເກມຮັກສັບສົນ ຊອກຊ້ອນຫຼາຍອັນ
ສນາມໃຈສະທ້ານ ສັ່ນສລາຍແຕກເພ

3) ສາບຮັກຊາຍ ເຖິງຕາຍຈະທົນອ້າເຫວ່
ອີກຈະເພ ບໍ່ຂໍໝາຍປຣາຖນາ
ຂໍ ສາບານໄວ້ວ່າ
ບໍ່ນຳພາ ກັບຄວາມຮັກເອີຍ...

# ຢ່າຄິດຫວັ່ນໄຫວ

ເນື້ອຮ້ອງ & ທຳນອງ : ...?...

ນັກຮ້ອງຕົ້ນສະບັບ : ຊຳນານ ຈິ່ງຮັກ

~1970

Bolero (♩ = 66)

(Intro) ______ ຢ່າ ຄິດ ໂສກ

A

ສັນ ເຖິງ ຄົນ ຮັກ ເຮົາ ບອກ ໃຈ______ ຢ່າ ຄິດ ອ່ອນ ໄຫວ ໃຫ້ ໃຈ ເຮົາ ຮ້ອນ ເຕັມ ທົນ ຢ່າ

ຄິດ ວ່າ ຍິງ ມີ ພຽງ ນີ່ງ ຄົນ______ ທົ່ວ ໂລກ ມາກ ລົ້ນ ຍັງ ມີ ຜູ້ ຍິງ ຖົມ ໄປ... ຢ່າ ຄິດ ຝັນ

B

ເພີ້ ລະ ເມີ ເຣື່ອງ ຄົນ ແຍກ ຄອນ______ ຢ່າ ຄິດ ສະ ທ້ອນ ອາ ວອນ - ຮ້ອງ - ໄຫ້ ເຖິງ -

ເຂົາ ຈະ ລືມ ເຖິງ ເຂົາ ປ່ຽນ ໃຈ______ ຈົ່ງ ປ່ອຍ ເຂົາ ໄປ ຢ່າ ໄດ້ ນຶກ ຫຼົງ ຕິດ ຕາມ... ຢ່າ

C

ຄິດ ຢ່າ ຄິດ ໃຫ້ ໃຈ ນັ້ນ ຕື່ນ______ ໃຫ້ ໃຈ ສະ ອື້ນ ຂືນ ໃນ ຄວາມ ຊັງ ເພາະ ໂລກ ມັນ

ໝຸນ ມັນ ວຽນ ທຸກ ຍາມ______ ບາງ ທີ ເຂົາ ຕາມ ຄືນ ມາ ງໍ້ - ເຮົາ... ຢ່າ ຄິດ ແປ

D

ຜັນ ເຖິງ ເຂົາ ລືມ ເຮົາ ກໍ ຕາມ______ ຈົ່ງ ພະ ຍາ ຍາມ ຫ້າມ ຫົວ - ໃຈ ເອົາ ຢ່າ

ເປັນ ຄົນ ເສີ້ ລະ ເມີ ທ່ອງ ເຂົາ______ ໄດ້ ແຕ່ ຫຼົງ ເຝົ້າ ນຶກ ເມົາ ຮັກ ເຂົາ ຂ້າງ ດຽວ... (Solo verse B)

To Coda

Coda

E

ດຽວ... (Coda) ______

Fine

# ຢ່າຄິດຫວັ່ນໄຫວ

Key : C
Bolero

ເນື້ອຮ້ອງ & ທຳນອງ : …?…
ນັກຮ້ອງຕົ້ນສະບັບ : ຊຳນານ ຈິ່ງຮັກ

~1970

1) ຢ່າຄິດໂສກສັນ ເຖິງຄືນຮັກເຮົານອກໃຈ
ຢ່າຄິດອ່ອນໄຫວ ໃຫ້ໃຈເຮົາຮ້ອນເຕັ້ນທົນ
ຢ່າຄິດ ວ່າຍິງມີພຽງນີ່ງຄົນ
ທົ່ວໂລກມາກລົ້ນ ຍັງມີຜູ້ຍິງຖົມໄປ

2) ຢ່າຄິດຝັນເພີ້ ລະເມີເຮື່ອງຄືນແຍກຄອນ
ຢ່າຄິດສະທ້ອນ ອາວອນຮ້ອງໄຫ້
ເຖິງເຂົາ ຈະລືມເຖິງເຂົາປ່ຽນໃຈ
ຈົ່ງປ່ອຍເຂົາໄປ ຢ່າໄດ້ນິວຫຼົງຕິດຕາມ

• ຢ່າຄິດ ຢ່າຄິດໃຫ້ໃຈນັ້ນຕື່ນ
ໃຫ້ໃຈສະອື້ນ ຂືນໃນຄວາມຊັ່ງ
ເພາະໂລກມັນໝຸນ ມັນວຽນທຸກຍາມ
ບາງທີເຂົາຕາມ ຄືນມາງໍ້ເຮົາ

3) ຢ່າຄິດແປຜັນ ເຖິງເຂົາລືມເຮົາກໍຕາມ
ຈົ່ງພະຍາຍາມ ຫ້າມຫົວໃຈເອົາ
ຢ່າເປັນ ຄົນເສີ້ລະເມີຫ່ວງເຂົາ
ໄດ້ແຕ່ຫຼົງເຝົ້າ ນິວເນົາຮັກເຂົາຂ້າງດຽວ...

# ກຸຫລາບສວັນ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ເພັດດາຣາ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1960

Slow Bolero (♩ = 72)

(Intro)

ກຸຫລາບ ສ




ວັນ ທຸກ ວັນ ອ້າຍ ຝັນ ເຖິງ ເຈົ້າ ເພັ້ ຮຳ ພັນ ຝັນ - ເຝົ້າ ປອງ ເອົາ ແຕ່ ນ້ອງ ນອນ ນາງ ແຕ່ ເຈົ້າ



ນັ້ນ ສັນ ໃດ ຈຶ່ງ ໄດ້ ເຫັນ ຫ່າງ ຫຼີ - ມີ ຄູ່ - ຄຽງ ຂ້າງ ນອນ ນາງ ຈຶ່ງ ບໍ່ ຂ້ອງ ກ່ຽວ... ອາ ສ




ນາ ຊາ ຕາ ອ້າຍ ນີ້ ຕ່ຳ ຕ້ອຍ ຮັກ ຈຶ່ງ ໄດ້ ເລື່ອນ - ລອຍ ເຝົ້າ ຄອຍ ຮັກ ນ້ອງ ຂ້າງ ດຽວ ຊ່າງ ລືມ



ລັຍ ນ້ຳ ໃຈ ກ່ອນ ນັ້ນ ຍຶດ ໝ່ຽວ ຫຼີ - ມີ ຄູ່ - ຂ້ອງ ກ່ຽວ ແໜ້ນໜຽວ ກັບ ໂສມ ຍຸ ພິນ...




ໂອ້... - ເມືອງ - ສ ວັນ ຫວັງ - ຜູກ ສຳ - ພັນ ຮັກ ກັນ ຊື່ ຟ້າ ແລະ ດິນ ມາ ບັດ



ນີ້ ນ້ອງ ລັຍ ລືມ ເລີຍ ເສັຽ ສິ້ນ ຄືງ ເຫຼືອ ແຕ່ ຟ້າ ກັບ ດິນ ໃຫ້ ເປັນ ອະ ນຸ ສອນ... ສິ້ນ ແລ້ວ ຊາດ




ນີ້ ບໍ່ ມີ ອິດ ເບັ້ນ ໃຫ້ ເຈົ້າ ອ້າຍ ຈຶ່ງ ຕ້ອງ ໝອງ - ເສົ້າ ອີກ ເອົ້າ ເຝົ້າ ຝັນ ອາ ທອນ ເຖິງ ຊາດ ໜ້າ




ມີ ອ້າຍ ນີ້ ກໍ ຂໍ ບໍ່ ຢ້ອນ ຍອດ - ຮັກ ເອີຍ - ລາ ກ່ອນ ນອນ ນ້ອງ ຈຶ່ງ ມີ ໂຊກ ດີ...




ດີ... (Coda)

# ກຸຫລາບສວັນ

Key : Bm
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ເພັດດາຣາ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1960

1) ກຸຫລາບສວັນ　　ທຸກວັນອ້າຍຝັນເຖິງເຈົ້າ
ເພີ້ອຳພັນຝັນເຝົ້າ　　ປອງເອົາແຕ່ນ້ອງນວນນາງ
ແຕ່ເຈົ້ານັ້ນ　　ສັນໃດຈິ່ງໄດ້ເຫີນຫ່າງ
ຫຼືມີຄູ່ຄຽງຂ້າງ　　ນວນນາງຈິ່ງບໍ່ຂ້ອງກ່ຽວ

2) ວາສນາ　　ຊາຕາອ້າຍນີ້ຕ່ຳຕ້ອຍ
ຮັກຈິ່ງໄດ້ເລື່ອນລອຍ　　ເຝົ້າຄອຍຮັກນ້ອງຂ້າງດຽວ
ຊ່າງລືມລັຍ　　ນ້ຳໃຈກ່ອນນັ້ນຍຶດໜ່ຽວ
ຫຼືມີຄູ່ຂ້ອງກ່ຽວ　　ແໜ້ນໜຽວກັບໂສມຍຸພິນ

• ໂອ້...　　ເມືອງສວັນ
ຫວັງຜູກສຳພັນ　　ຮັກກັນຊື່ອຟ້າແລະດິນ
ມາບັດນີ້　　ນ້ອງລັຍລືມເລີຍເສັຽສິ້ນ
ຄົງເຫຼືອແຕ່ຟ້າກັບດິນ　　ໃຫ້ເປັນອະນຸສອນ

3) ສິ້ນແລ້ວຊາດນີ້　　ບໍ່ມີຣິຖເບັ້ນໃຫ້ເຈົ້າ
ອ້າຍຈິ່ງຕ້ອງໝອງເສົ້າ　　ອີກເອົ້າເຝົ້າຝັນອາທອນ
ເຖິງຊາດໜ້າມີ　　ອ້າຍນີ້ກໍຂໍບໍ່ຢ້ອນ
ຍອດຮັກເອີຍລາກ່ອນ　　ນວນນ້ອງຈິ່ງມີໂຊກດີ...

# ກຸຫລາບຫລວງພຣະບາງ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ເພັດດາຣາ
ນັກຮ້ອງຕົ້ນສະບັບ : ວຽງແອວ ວົງວຽງຄຳ

~1959

Slow Bolero (♩ = 68)

Eb Bb Cm Ab Fm Bb

(Intro) Flute

Eb Eb7 Ab C7 Fm Gm Ab Bb Cm Ab Bb

Strings

Flute

**A**

1 Cm Bb Cm Bb Cm Ab Bb

ໂອ້ ຫລວງພຣະ ບາງ ຟາກ ຟ້າ ແດນ ໄກ ແດນ ພູ ປ່າ ພະ ນາ ອຳ ໄພ ນຶກ ເຖິງຍັງໃກ້ ນ້ຳ ໃຈ ຂອງ ນາງ ແຜ່ນ

5 Ab C7 Fm Gm Ab Bb Eb Ab Bb

ພູ ແລະ ຜາ ໝາ ກັ້ນ ເປັນ ທາງ ຂັ້ນ ດວງ ໃຈ ໃຫ້ ຫ່າງ ຂໍ ນ້ອງ ຢ່າ ຮ້າງ ຫ່າງ ລາ...

**B**

9 Cm Bb Cm Bb Cm Ab Bb

ແມ່ ຂອງ ແມ່ ຄານ ໄຫຼ ກ້ຽວ ຜູກ ພັນ ເໝືອນ ດັ່ງ ເຊັ່ນ ດວງ ໃຈ ອ້າຍ ນັ້ນ ມາ ຂໍ ຮັກໝັ້ນ ສັນ ພັນ ຊື່ອ ຟ້າ ແບກ

13 Ab C7 Fm Gm Ab Bb Cm Ab Bb

ຮັກ ຂ້າມ ຂອງ ໝື່ນ ໝອງ ອຸ ຣາ ນຶກ ເຖິງ ວາ ສ ນາ ຈະ ມາ ຄູ່ ຄຽງ ຄືນ ດີ...

**C**

17 Fm Gm Ab Bb Eb

ອ້າຍ... ແບກຄວາມຮັກ ມາ ຫາ ກາຍແລະຈິດ ອຸ ທິດ ຊີ ວາ ມຸ່ງ ມາ ຫາ ເພື່ອ ຕາຍແດນ ນີ້ ລືມໝາວໂບກ

21 Gm Cm Ab Bb Cm Bb G Ab Bb

ມາ ອຸ ຣາໝອງໄໝ້ ທະ ວິ ເກງຄວາມຮັກ ຈະ ເກີນ ສັກ ສີ ນ້ອງ ຄືນ ດີ ທີ່ ອ້າຍ ໝັ້ນ ໝາຍ...

**D**

25 Cm Bb Cm Bb Cm Ab Bb

ເຖິງ ແມ່ນ ຢ່າງ ໃດ ຂໍ ໃຫ້ ເອົ້າ ມາ ຮັກ ຫຼື ໂກດໂປຣດ ໄດ້ ເອີຍ ຈາ ຢ່າ ນຶກເລີຍ ວ່າ ຜູ່ ຊາຍ ແດນ ໄກ ຫາກ

29 Ab C7 Fm Gm Ab Bb Cm

To Coda

1.

ຮັກ ຈະ ຂໍ ດົ້ນ ດັ້ນ ປ່າ ໄພ ພູ ແລະ ຜາ ກວ້າງ ໃຫຍ່ ດ້ອຍ ໃຈ ມາ ຫາ ເຈົ້າ ເອີຍ... (Solo) Flute

33 Eb Bb Cm Fm Ab Bb Eb Eb7 Ab C7 Fm Gm Ab Bb Cm Ab Bb

8

Strings

Flute

Coda

**E**

41 Cm Eb Bb Cm Fm Ab Bb Cm C

2.

ເອີຍ... (Coda) Flute

Fine

# ກຸຫລາບຫລວງພຣະບາງ

Key : Cm
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ເພັດດາຣາ
ນັກຮ້ອງຕົ້ນສະບັບ : ວຽງແວວ ວົງວຽງຄຳ

~1959

1) ໂອ້ຫລວງພຣະບາງ ຟາກຟ້າແດນໄກ
ແດນພູປ່າພະນາອຳໄພ ນຶກເຖິງຍັງໃກ້ນ້ຳໃຈຂອງນາງ
ແຜ່ນພູແລະຜາ ໝາກັ້ນເປັນທາງ
ຂັ້ນດວງໃຈໃຫ້ຫ່າງ ຂໍນ້ອງຢ່າຮ້າງຫ່າງລາ

2) ແມ່ຂອງແມ່ຄານ ໄຫຼກ້ຽວຜູກພັນ
ເໝືອນດັ່ງເຊັ່ນດວງໃຈອ້າຍນັ້ນ ມາຂໍຮັກໝັ້ນສັມພັນຊື່ອຟ້າ
ແບກຮັກຂ້າມຂອງ ໝັ່ນໝອງອຸຣາ
ນຶກເຖິງອາສນາ ຈະມາຄູ່ຄຽງຄືນດີ

• ອ້າຍ... ແບກຄວາມຮັກມາຫາ
ກາຍແລະຈິດອຸທິດຊີວາ ມຸ່ງມາຫາເພື່ອຕາຍແດນນີ້
ລືມໝາວໂບກມາ ອຸຣາໝອງໄໝ້ທະວີ
ເກງຄວາມຮັກຈະເກີນສັກສີ ນ້ອງຄືນດີທີ່ອ້າຍໝັ້ນໝາຍ

3) ເຖິງແມ່ນຢ່າງໃດ ຂໍໃຫ້ເອົ້າມາ
ຮັກຫຼືໂກດໂປຣດໄດ້ເອີ່ຍຈາ ຢ່ານຶກເລີຍວ່າຜູ້ຊາຍແດນໄກ
ຫາກຮັກຈະຂໍ ດົ້ນດັ້ນປ່າໄພ
ພູແລະຜາກວ້າງໃຫຍ່ ດ້ອຍໃຈມາຫາເຈົ້າເອີຍ...

